**ທຸກກຸກກະ**
ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກສຸດີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ຕ້ອງອາບັຕິທຸກກະ
ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກສຸດີບໍ່ແນ່ໃຈ ຕ້ອງອາບັຕິທຸກກະ
ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກສຸດີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**
ກິກສຸດີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໗໔] ໑. ກິກສຸດີນຳກັປປິຍກັຕຫ໌ທີ່ເຫລືອໄປໃຊ້ເພື່ອປໂຍດຢ່າງອື່ນ
໔. ກິກສຸດີຂໍອນຸຍາຕເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປໂຍດຢ່າງອື່ນ
໓. ກິກສຸດີຜູ້ມີເຫດຸຂັດຂ້ອງ
໔. ກິກສຸດີວິກົລຈິຕ
໕. ກິກສຸດີຕົ້ນບັນຍັດ

ສິກຂາບົທທີ ໗ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໓. ນິສສັຄຄິຍກັຕຫ໌] ໑. ປັຕຕວັຄ ສິກຂາບົທທີ ໘ ນິທານວັຕຖຸ**
**໑. ປັຕຕວັຄ**

**ສິກຂາບົທທີ ໘**
ວ່າດ້ວຍການແລກປ່ຽນບໍຣິຂາຣທີ່ເຂົາຖວາຍແກ່ຄຕະຂໍ້ທີ ໔

**ເຣື້ອງກິກສຸດີຫລາຍຮູບ**
[໗໗໓] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທຣເຈົ້າປະທັບຢູ່ ຕະ ພຣະເຊຕວັນ ອາຣາມຂອງອນາຖບິດກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກສຸດີທັງຫລາຍທີ່ອາສັຍຢູ່ໃນບໍຣິເວຕຂອງສມາຄົມແຫ່ງນຶ່ງ ອັຕຄັດເຂົ້າຕົ້ມ ສມາຄົມນັ້ນຈຶ່ງຮວບຮວມບໍຣິຂາຣທີ່ເຂົາໃຫ້ດ້ວຍຄວາມພໍໃຈເພື່ອຄ່າເຂົ້າຕົ້ມຖວາຍກິກສຸດີທັງຫລາຍແລ້ວຝາກໄວ້ທີ່ບ້ານຂອງເຈົ້າຂອງຮ້ານຄ້າຄົນນຶ່ງ ແລ້ວເຂົ້າໄປຫາກິກສຸດີ

ທັງຫລາຍ ໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ພວກເຮົາຝາກບໍຣິຂາຣຄ່າເຂົ້າຕົ້ມໄວ້ທີ່ບ້ານຂອງເຈົ້າຂອງຮ້ານຄ້າຊື່ພຸ້ນ ທ່ານທັງຫລາຍໂປຣດໃຫ້ໄວຍາວັຈກອນໄປນຳເຂົ້າສາຣຈາກບ້ານນັ້ນມາຫຸງຕົ້ມຈັນເຖິດ ຂະນ້ອຍ" ກິກຂຸຕີທັງຫລາຍຂໍໃຫ້ເອົາບໍຣິຂາຣນັ້ນແລກປ່ຽນເກສັຊເອງແລ້ວບໍຣິໂກຄສມາຄົມນັ້ນຊາບເຂົ້າ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກກິກຂຸຕີຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງທີ່ເຂົາບໍຣິຈາຄແກ່ກິກຂຸຕີຈຳນວນຫລາຍ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ" ກິກຂຸຕີທັງຫລາຍໄດ້ຍິນສມາຄົມນັ້ນຕຳໜິ ປະນາມ ໂພນທະນາ ບັນດາກິກຂຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາ ວ່າ "ຈັ່ງໃດພວກກິກຂຸຕີຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງທີ່ເຂົາບໍຣິຈາຄແກ່ກິກຂຸຕີຈຳນວນຫລາຍ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ" ຄັນແລ້ວ ກິກຂຸຕີເຫລົ່ານັ້ນໄດ້ນຳເອື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸໄດ້ນຳເອື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ພວກກິກຂຸຕີໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ກິກຂຸຕີຈຳນວນຫລາຍ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນ ແມ່ນແທ້ບໍ" ກິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ກິກຂຸທັງຫລາຍ ຈັ່ງໃດພວກກິກຂຸຕີຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ກິກຂຸຕີຈຳນວນຫລາຍທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ ກິກຂຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຂຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໔] ກໍກິກຂຸຕີໃດໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ກິກຂຸຕີຈຳນວນຫລາຍ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ເຣື້ອງກິກບຸຕີຫລາຍຮູບ ຈົບ

**ສິກຂາບົທວິກັງຄ໌**

[໑໑໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ
ຄຳວ່າ ກິກບຸຕີ ມີອະທິບາຍວ່າ ຊື່ວ່າກິກບຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກບຸຕີ ໃນຄວາມຫມາຍນີ້

ຄຳວ່າ ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ຄືຂອງທີ່ທາຍົກຖວາຍເປັນມູລຄ່າປັຈຈັຍຢ່າງນຶ່ງ

ຄຳວ່າ ທີ່ເຂົາບໍຣິຈາຄແກ່ກິກບຸຕີຈຳນວນຫລາຍ ຄື ທີ່ເຂົາບໍຣິຈາຄເພື່ອປໂຍດແກ່ຄຕະ ບໍ່ແມ່ນແກ່ສົງໝ໌ ບໍ່ແມ່ນແກ່ບຸຄຄົລ

ຄຳວ່າ ທີ່ຂໍມາເອງ ຄື ຂໍມາແລ້ວເອງ

ຄຳວ່າ ໃຫ້ . . . ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນເປັນປັຈຈັຍຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັຕິທຸກກຎໃນຂຕະທີ່ໃຫ້ແລກປ່ຽນຂອງນັ້ນເປັນນິສສັຄຄີຍ໌ເພາະໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງໝ໌ ແກ່ຄຕະ ຫລືແກ່ກິກບຸຕີຮູບດຽວ

ກິກບຸທັງຫລາຍ ກິກບຸຕີຄວນສລະຂອງທີ່ເປັນນິສສັຄຄີຍ໌ຢ່າງນີ້

**ວິທີສລະທີ່ເປັນນິສັຄຄີຍ໌**

**ສລະແກ່ສົງໝ໌**

ກິກບຸຕີຮູບນັ້ນຄວນເຂົ້າໄປຫາສົງໝ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນກິກບຸຕີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂອງນີ້ຂະນ້ອຍໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ກິກບຸຕີຈຳນວນຫລາຍທີ່ຂໍມາເອງ ແລກປ່ຽນມາ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະຂອງນີ້ແກ່ສົງໝ໌" ຄັນສລະແລ້ວຄວນສະແດງອາບັຕິ ກິກບຸຕີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຂອງ ທີ່ທ່ານສລະໃຫ້ດ້ວຍຍັຕຕິກັມ ວາຈາວ່າ "ແມ່ເຈົ້າ ຂໍສົງໝ໌ຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງກິກບຸຕີຊື່ນີ້ເປັນນິສສັຄຄີຍ໌ ທ່ານສລະແກ່ສົງໝ໌ ຖ້າສົງໝ໌ພ້ອມກັນແລ້ວຄວນຄືນຂອງນີ້ໃຫ້ແກ່ກິກບຸຕີຊື່ນີ້"

**ສລະແກ່ຄຕະ**

ກິກບຸຕີຮູບນັ້ນຄວນເຂົ້າໄປຫາກິກບຸຕີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງຂາບຕີນກິກບຸຕີ

ຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ "ຯລຯ ຄວນຄືນຂອງນີ້ໃຫ້ແກ່ກິກຂຸຕີຊື່ນີ້"

**ສລະແກ່ບຸຄຄົລ**

ກິກຂຸຕີຮູບນັ້ນຄວນເຂົ້າໄປຫາກິກຂຸຕີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນສະແດງອາບັຕິ ຯລຯ "ຂະນ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໓. ນິສສັຄຄີຍກັດຫ໌] ໑. ປັຕຕວັຄ ສິກຂາບົທທີ ໔ ອນາປັຕຕິວາຣ

**ບົທກາຊນີຍ໌**

**ຕິກນິສສັຄຄີຍປາຈິຕຕີຍ໌**

[໗໗໕] ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຂຸຕີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຂຸຕີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢ່າງອື່ນຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຂຸຕີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌

ກິກຂຸຕີໄດ້ຂອງທີ່ສລະແລ້ວຄືນມາຄວນຮວມກັບປັຈຈັຍທີ່ເຂົາຖວາຍໄວ້

**ທຸກທຸກກຍ**

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຂຸຕີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ຕ້ອງອາບັຕິທຸກກຍ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຂຸຕີບໍ່ແນ່ໃຈ ຕ້ອງອາບັຕິທຸກກຍ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຂຸຕີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ກິກບຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໗໗] ໑. ກິກບຸຕີນຳກັປປິຍກັຕທ໌ທີ່ເຫລືອໄປໃຊ້ເພື່ອປໂຍດຢ່າງອື່ນ

໔. ກິກບຸຕີຂໍອນຸຍາຕເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປຣະໂຍຊ໌ຢ່າງອື່ນ

໓. ກິກບຸຕີຜູ້ມີເຫຕຸຂັດຂ້ອງ

໔. ກິກບຸຕີວິກົລຈິຕ

໕. ກິກບຸຕີຕົ້ນບັນຍັດ

ສິກຂາບົທທີ່ ໙ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໓. ນິສສັຄຄິຍກັຕທ໌] ໑. ປັຕຕວັຄ ສິກຂາບົທທີ່ ໑໐ ນິທານວັຕຖຸ**

**໑. ປັຕຕວັຄ**

**ສິກຂາບົທທີ່ ໑໐**

ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍແກ່ບຸຄຄົລ

**ເຣື້ອງກິກບຸຕີຖຸລລນັນທາ**

[໗໗໘] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຮາມຂອງອນາຖບິຓ ຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກບຸຕີຖຸລລນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວຄັມມີກຖາ ຄົນຈຳນວນຫລາຍເຂົ້າໄປຫາກິກບຸຕີຖຸລລນັນທານັ້ນ ສມັຍນັ້ນ ບໍຣິເວຓທີ່ຢູ່ຂອງກິກບຸຕີຖຸລລນັນທາເປ່ເພ ຊາວບ້ານໄດ້ກ່າວກັບກິກບຸຕີຖຸລລນັນທາດັ່ງນີ້ວ່າ "ແມ່ເຈົ້າ ເພາະເຫຕຸໃດບໍຣິເວຓທີ່ຢູ່ຂອງທ່ານຈຶ່ງເປ່ເພລະ" ນາງຕອບວ່າ "ເພາະບໍ່ມີທາຍົກ ຜູ້ກໍ່ສ້າງສ້ອມແປງກໍບໍ່ມີ" ຄົນທັງຫລາຍຈຶ່ງຮວບຮວມບໍຣິຂານທີ່ເຂົາໃຫ້ດ້ວຍຄວາມພໍໃຈເປັນຄ່າບູຣຕະບໍຣິເວຓຖວາຍກິກບຸຕີຖຸລລນັນທາ ແຕ່ກິກບຸຕີຖຸລລນັນທາຂໍໃຫ້ເອົາບໍຣິຂານນັ້ນແລກປ່ຽນເກສັຊເອງແລ້ວບໍຣິໂກຄພວກຊາວບ້ານຊາບເຣື້ອງເຂົ້າ ຈຶ່ງຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລນັນທາຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ບຸຄຄົລ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ" ຄັນແລ້ວ ກິກບຸຕີເຫລົ່ານັ້ນໄດ້

ນຳເອື້ອງນີ້ໄປບອກກິກສຸທັງຫລາຍໃຫ້ຊາບ ພອກກິກສຸຈຶ່ງໄດ້ນຳເອື້ອງນີ້ໄປຂາບທູລພຣະຜູ້ມີພຣະ ກາຄໃຫ້ຊົງຊາບ

**ຊົງປະຊຸມສົງໝ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະກາຄຣັບສັ່ງໃຫ້ປະຊຸມສົງໝ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກສຸ ທັງຫລາຍວ່າ "ກິກສຸທັງຫລາຍ ຊາບວ່າ ກິກສຸຕີຖຸລລນັນທາໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປ ໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ບຸຄຄົລທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນ ແມ່ນແທ້ບໍ" ກິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະ ຜູ້ມີພຣະກາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ກິກສຸທັງຫລາຍ ຈັ່ງໃດກິກສຸຕີຖຸລລນັນທາຈຶ່ງໃຫ້ ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິ ຈາຄແກ່ບຸຄຄົລ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ ກິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມ ໃສຍິ່ງຂຶ້ນ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກສຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໙] ກໍກິກສຸຕີໃດໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍ ອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ບຸຄຄົລ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສ ສັຄຄິຍປາຈິຕຕີຍ໌

ເອື້ອງກິກສຸຕີຖຸລລນັນທາ ຈົບ

**ສິກຂາບົທວິກັງຄ໌**

[໗໘໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ ຄຳວ່າ ກິກສຸຕີ ມີອະທິບາຍວ່າ ຊື່ວ່າກິກສຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ ເອົາວ່າ ກິກສຸຕີ ໃນຄວາມໝາຍນີ້

ຄຳວ່າ ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ຄື ຂອງທີ່ທາຍົກຖວາຍເປັນມູລຄ່າປັຈຈັຍຢ່າງນຶ່ງ

ຄຳວ່າ ທີ່ເຂົາບໍຣິຈາຄແກ່ບຸຄຄົລ ຄື ທີ່ເຂົາບໍຣິຈາຄເພື່ອປໂຍດແກ່ບຸຄຄົລ ບໍ່ແມ່ນແກ່ສົງໝ໌ ບໍ່ແມ່ນ ແກ່ຄຓະ

ຄຳວ່າ ທີ່ຂອມາເອງ ຄື ຂອມາແລ້ວເອງ

ຄຳວ່າ ໃຫ້ . . . ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນປັຈຈັຍຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັຕິທຸກກະໃນຂະນະທີ່ໃຫ້ແລກປ່ຽນ ຂອງນັ້ນເປັນນິສສັຄຄິຍ໌ເພາະໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຄ໌ ແກ່ຄະນະ ຫລືແກ່ກິກຫຸນີຮູບດຽວ

ກິກຫຸທັງຫລາຍ ກິກຫຸນີຄວນສລະຂອງທີ່ເປັນນິສສັຄຄິຍ໌ຢ່າງນີ້

**ວິທີສລະຂອງທີ່ເປັນນິສສັຄຄິຍ໌**

**ສລະແກ່ສົງຄ໌**

ກິກຫຸນີຮູບນັ້ນຄວນເຂົ້າໄປຫາສົງຄ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນກິກຫຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂອງນີ້ຂະນ້ອຍໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ບຸຄຄົລທີ່ຂໍມາເອງ ແລກປ່ຽນມາ ເປັນນິສສັຄຄິຍ໌ ຂະນ້ອຍຂໍສລະຂອງນີ້ແກ່ສົງຄ໌" ຄັນສລະແລ້ວຄວນສະແດງອາບັຕິ ກິກຫຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຂອງທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງກິກຫຸນີຊື່ນີ້ເປັນນິສສັຄຄິຍ໌ ທ່ານສລະແກ່ສົງຄ໌ ຖ້າສົງຄ໌ພ້ອມກັນແລ້ວຄວນຄືນຂອງນີ້ໃຫ້ແກ່ກິກຫຸນີຊື່ນີ້"

ສລະແກ່ຄະນະກິກຫຸນີຮູບນັ້ນຄວນເຂົ້າໄປຫາກິກຫຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງຂາບຕີນກິກຫຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ "ຯລຯ ຄວນຄືນຂອງນີ້ໃຫ້ແກ່ກິກຫຸນີຊື່ນີ້"

**ສລະແກ່ບຸຄຄົລ**

ກິກຫຸນີຮູບນັ້ນຄວນເຂົ້າໄປຫາກິກຫຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນສະແດງອາບັຕິ ຯລຯ "ຂະນ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໓. ນິສສັຄຄິຍກັຕຫ໌] ໑. ປັຕຕວັຄ ສິກຂາບົທທີ ໑໐ ອນາປັຕຕິວາຣ**

**ບົທການຸນິຍ໌**

**ຕິກນິສສັຄຄິຍປາຈິຕຕິຍ໌**

[໗໘໑] ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຊຸຕີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຊຸຕີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຊຸຕີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ກິກຊຸຕີໄດ້ຂອງທີ່ສລະແລ້ວຄືນມາຄວນຮວມກັບປັຈຈັຍທີ່ເຂົາຖວາຍໄວ້ເດີມ

**ທຸກກຸກກຍ**

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຊຸຕີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ຕ້ອງອາບັຕິທຸກກຸກຍ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຊຸຕີບໍ່ແນ່ໃຈ ຕ້ອງອາບັຕິທຸກກຸກຍ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ກິກຊຸຕີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ກິກຊຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໘໔] ໑. ກິກຊຸຕີນຳກັປປິຍກັຕທ໌ທີ່ເຫລືອໄປໃຊ້ເພື່ອປໂຍດຢ່າງອື່ນ

໒. ກິກຊຸຕີຂໍອນຸຍາຕເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປໂຍດຢ່າງອື່ນ

໓. ກິກຊຸຕີຜູ້ມີເຫຕຸຂັດຂ້ອງ

໔. ກິກຊຸຕີວິກົລຈິຕ

໕. ກິກຊຸຕີຕົ້ນບັນຍັດ

ສິກຂາບົທທີ ໑໐ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໓. ນິສສັຄຄິຍກັຕຫ໌] ໑. ປັຕຕວັຄ ສິກຂາບົທທີ ໑໑ ນິທານວັຕຖຸ

## ໑. ປັຕຕວັຄ

### ສິກຂາບົທທີ ໑໑

ວ່າດ້ວຍການຂໍຜ້າຫົ່ມໜາໃນຣະດູໜາວ

### ເຣື້ອງກິກຂຸນີຖຸລລນັນທາ

[໗໗໓] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທທເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຮາມຂອງອນາຖບິຕ ຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກຂຸນີຖຸລລນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວລັມມີກຖາ ສມັຍນັ້ນໃນຣະດູໜາວ ພຣະເຈົ້າປເສນທິໂກສົລຊົງຜ້າກັມພົລຣາຄາແພງເຂົ້າໄປຫາກິກຂຸນີຖຸລລນັນທາເຖິງທີ່ຢູ່ ຊົງອກິວາທແລ້ວປະທັບນັ່ງຓະ ທີ່ສົມຄວຣ ກິກຂຸນີຖຸລລນັນທາຊີ້ແຈງໃຫ້ພຣະເຈົ້າປເສນທິໂກສົລຜູ້ປະທັບນັ່ງ ຓະ ທີ່ສົມຄວຣເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາຈຫານເກັ່ງກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍລັມມີກຖາ ລຳດັບນັ້ນ ພຣະເຈົ້າປເສນທິໂກສົລຜູ້ຊຶ່ງກິກຂຸນີຖຸລລນັນທາຊີ້ແຈງໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາຈຫານເກັ່ງກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍລັມມີກຖາແລ້ວ ໄດ້ຕຣັສກັບກິກຂຸນີຖຸລລນັນທາດັ່ງນີ້ວ່າ "ແມ່ເຈົ້າທ່ານຕ້ອງການສິ່ງໃດກໍໂປຣດໄດ້ບອກເຖີດ" ກິກຂຸນີຖຸລລນັນທານັ້ນທູລວ່າ "ຂໍຖວາຍພຣະພອນ ຖ້າພຣະອົງຄ໌ມີພຣະຣາຊປະສົງຄ໌ຈະພຣະຣາຊທານ ກໍຂໍໄດ້ໂປຣດພຣະຣາຊທານຜ້າກັມພົລຜືນນີ້ເຖີດ" ຄັ້ງນັ້ນ ພຣະເຈົ້າປເສນທິໂກສົລຖວາຍຜ້າກັມພົລຜືນນັ້ນແກ່ກິກຂຸນີຖຸລລນັນທາ ສເດັຈລຸກຈາກທີ່ປະທັບນັ່ງຊົງອກິວາທກິກຂຸນີຖຸລລນັນທາແລ້ວທຳປະທັກສິຕ(ວຽນໄປທາງຂວາ)ສເດັຈຈາກໄປ ພວກຊາວບ້ານຕຳໜິ ປະນາມ ໂພນທະນາວ່າ "ພວກກິກຂຸນີເປັນຄົນມັກມາກບໍ່ສັນໂດສ ຈັ່ງໃດຈຶ່ງອອກປາກທູລຂໍຜ້າກັມພົລຈາກພຣະຣາຊາລະ" ກິກຂຸນີທັງຫລາຍໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາກິກຂຸນີຜູ້ມັກນ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລນັນທາຈຶ່ງອອກປາກທູລຂໍຜ້າກັມພົລຈາກພຣະຣາຊາລະ" ຄັນແລ້ວ ກິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບຊົງປະຊຸມສົງຄ໌ບັນຍັດສິກຂາບົທ ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ກິກຂຸນີຖຸລລນັນທາ

ອອກປາກທູລຂໍຜ້າກັມພົລຈາກພຣະຣາຊາ ແມ່ນແທ້ບໍ" ກິກຊຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ"ພຣະຜູ້ມີພຣະການພຸທສເຈົ້າຊົງຕຳໜິວ່າ "ຯລຯ ກິກຊຸທັງຫລາຍ ຈັ່ງໃດກິກຊຸຕີຖຸລລນັນທາຈຶ່ງອອກປາກທູລຂໍຜ້າກັມພົລຈາກພຣະຣາຊາລະ ກິກຊຸທັງຫລາຍ ການກະທຳຢ່າງນີ້ ມິໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຊຸຕີທັງຫລາຍຍກສິຂາບທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໔] ກໍກິກຊຸຕີເມື່ອຈະຂໍຜ້າຫົ່ມໜາ ຄວນຂໍໄດ້ພຽງຣາຄາ ໔ ກັງສະ໑ ເປັນຢ່າງມາກ ຖ້າຂໍເກີນກວ່ານັ້ນ ຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌໔

ເອື້ອງກິກຊຸຕີຖຸລລນັນທາ ຈົບ

**ສິກຂາບົທວິກັງຄ໌**

[໗໗໕] ທີ່ຊື່ວ່າ ຜ້າຫົ່ມໜາ ໄດ້ແກ່ ຜ້າຫົ່ມຊນິດນຶ່ງທີ່ໃຊ້ຫົ່ມໃນຣະດູໜາວລິ

ຄຳວ່າ ເມື່ອຈະຂໍ ຄື ເມື່ອຈະອອກປາກຂໍ

ຄຳວ່າ ຄວນຂໍໄດ້ພຽງຣາຄາ ໔ ກັງສະ ຄື ຄວນຂໍຜ້າທີ່ມີຣາຄາ ໑໖ ກຫາປຕະໄດ້

ຄຳວ່າ ຖ້າຂໍເກີນກວ່ານັ້ນ ຄວາມວ່າ ກິກຊຸຕີອອກປາກຂໍຜ້າຣາຄາເກີນກວ່ານັ້ນ ຕ້ອງອາບັຕິທຸກກຏໃນຂຕະທີ່ຂໍຜ້ານັ້ນເປັນນິສສັຄຄີຍ໌ເພາະໄດ້ມາ ຄື ເປັນຂອງຈຳຕ້ອງສລະແກ່ສົງຆ໌ ແກ່ຄຕະຫລືແກ່ກິກຊຸຕີຮູບດຽວ

ກິກຊຸທັງຫລາຍ ກິກຊຸຕີຄວນສລະຜ້າທີ່ເປັນນິສສັຄຄີຍ໌ຢ່າງນີ້

**ໝາຍເຫດ :**

໑ ໑ ກັງສະ ເທົ່າກັບ ໔ ກຫາປຕະ, ໔ ກັງສະ ຈຶ່ງເທົ່າກັບ (໔x໔) ໑໖ ກຫາປຕະ (ກົງຂາ. ອ. ໓໕໔)

໔ ຫມາຍຄວາມວ່າ ກິກຊຸຕີຂໍຈາກຄົນອື່ນ ຕ້ອງອາບັຕິນິສສັຄຄີຍ໌ປາຈິຕຕີຍ໌ ແຕ່ຖ້າຂໍຈາກສຫລຣຣມິກ ຍາຕແລະຄົນປວາຣຕາ ແມ່ນຈະຣາຄາເກີນ ໔ ກັງສະ ກໍບໍ່ຕ້ອງອາບັຕິ (ກົງຂາ. ອ. ໓໕໔)

໓ ຫມາຍເຖິງຜ້າຫົ່ມເນື້ອຫນາສຳລັບຫົ່ມໃນຣະດູຫນາວ (ສີຕກາເລ ຫິ ມນຸສິສາ ຫຼລປາວຸຣຕົ ປາ ຣຸປນິຕິ -ປາຈິຕິຍາທີ-ໂຍຊນາ ໑໑໓໔/໑໕໑໓ ມ. )

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໓. ນິສສັຄຄິຍກັຓທ໌] ໑. ປັຕຕວັຄ ສິກຂາບົທທີ ໑໑ ບົທກາ ຊນີຍ໌

## ວິທີສລະຜ້າຫົ່ມທີ່ເປັນນິສສັຄຄີຍ໌

### ສລະແກ່ສົງຄ໌

ກິກສຸຕີຮູບນັ້ນຄວນເຂົ້າໄປຫາສົງຄ໌ ຫົ່ມອຸຕຕຣາສົງຄ໌ບ່ງງບ່າຂ້າງນຶ່ງ ຂາບຕີນກິກສຸຕີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຜ້າຫົ່ມຫນາຜືນນີ້ຣາຄາເກີນ ໔ ກັງສະຂະນ້ອຍຂອມາ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະຜ້າຫົ່ມຫນາຜືນນີ້ແກ່ສົງຄ໌" ຄັນສລະແລ້ວຄວນສະແດງ ອາບັຕິກິກສຸຕີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຜ້າຫົ່ມຫນາທີ່ທ່ານສລະໃຫ້ ດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ຜ້າຫົ່ມຫນາຜືນນີ້ຂອງກິກສຸຊື່ນີ້ ເປັນ ນິສສັຄຄີຍ໌ທ່ານສລະແກ່ສົງຄ໌ ຖ້າສົງຄ໌ພ້ອມກັນແລ້ວຄວນຄືນຜ້າຫົ່ມຫນາຜືນນີ້ໃຫ້ແກ່ກິກສຸຕີຊື່ນີ້"

### ສລະແກ່ຄຕະ

ກິກສຸຕີຮູບນັ້ນຄວນເຂົ້າໄປຫາກິກສຸຕີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ງງບ່າຂ້າງນຶ່ງ ຂາບຕີນກິກສຸຕີ ຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍຯລຯ ຂະນ້ອຍຂໍສລະຜ້າຫົ່ມຫ ນາຜືນນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ"ຯລຯ ຄວນຄືນຜ້າຫົ່ມຫນາຜືນນີ້ ໃຫ້ແກ່ກິກສຸຕີຊື່ນີ້"

### ສລະແກ່ບຸຄຄົລ

ກິກສຸຕີຮູບນັ້ນຄວນເຂົ້າໄປຫາກິກສຸຕີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ງງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຜ້າຫົ່ມຫນາຜືນນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນສະ ແດງອາບັຕິ ຯລຯ "ຂະນ້ອຍຄືນຜ້າຫົ່ມຫນາຜືນນີ້ໃຫ້ແກ່ແມ່ເຈົ້າ"

### ບົທກາຊນີຍ໌

**ຕິກນິສສັຄຄິຍປາຈິຕຕີຍ໌**

[໗໘໖] ຜ້າທີ່ມີຫນາຣາຄາເກີນ ໔ ກັງສະ ກິກຂຸຕີສຳຄັນວ່າເກີນ ຂໍ ຕ້ອງອາບັຕິນິສສັຄຄີຍ ປາຈິຕຕີຍ໌

ຜ້າທີ່ມີຫນາຣາຄາເກີນ ໔ ກັງສະ ກິກຂຸຕີບໍ່ແນ່ໃຈ ຂໍ ຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌

ຜ້າທີ່ມີຫນາຣາຄາເກີນ ໔ ກັງສະ ກິກຂຸຕີສຳຄັນວ່າມີຣາຄາຫນ້ອຍກວ່າ ຂໍ ຕ້ອງອາບັຕິນິສສັຄຄີຍ ປາຈິຕຕີຍ໌

**ທຸກກຸກກຍ**

ຜ້າທີ່ມີຫນາຣາຄາຫນ້ອຍກວ່າ ໔ ກັງສະ ກິກຂຸຕີສຳຄັນວ່າເກີນ ຕ້ອງອາບັຕິທຸກກຍ

ຜ້າທີ່ມີຫນາຣາຄາຫນ້ອຍກວ່າ ໔ ກັງສະ ກິກຂຸຕີບໍ່ແນ່ໃຈ ຕ້ອງອາບັຕິທຸກກຍ

ຜ້າທີ່ມີຫນາຣາຄາຫນ້ອຍກວ່າ ໔ ກັງສະ ກິກຂຸຕີສຳຄັນວ່າຫນ້ອຍກວ່າ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ກິກຂຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໘໗] ໑. ກິກຂຸຕີຂໍຜ້າທີ່ມີຫນາຣາຄາ ໔ ກັງສະເປັນຢ່າງຫລາຍ

໒. ກິກຂຸຕີຂໍຜ້າທີ່ມີຫນາຣາຄາຫນ້ອຍກວ່າ ໔ ກັງສະ

໓. ກິກຂຸຕີຂໍຈາກຍາຕ

໔. ກິກຂຸຕີຂໍຈາກຄົນປວາຣຕາ

໕. ກິກຂຸຕີຂໍເພື່ອປໂຍດແກ່ຜູ້ອື່ນ

໖. ກິກຂຸຕີຊື້ມາດ້ວຍຊັພຍ໌ຂອງຕົນ

໗. ກິກຂຸຕີຈ່າຍຜ້າຣາຄາຖືກ ແຕ່ທາຍົກຜູ້ຕ້ອງການໃຫ້ຈ່າຍຜ້າຣາຄາແພງ

໘. ກິກຂຸຕີວິກົລຈິຕ

໙. ກິກຂຸຕີຕົ້ນບັນຍັດ

ສິກຂາບົທທີ ໑໑ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໓. ນິສສັຄຄີຍກັຕທ໌] ໑. ປັຕຕວັຄ ສິກຂາບົທທີ ໑໔ ນິທານ ວັຕຖຸ**

## ໑. ປັຕຕວັຄ

### ສິກຂາບົທທີ ໑໔

ວ່າດ້ວຍການຂໍຜ້າຫົ່ມບາງໃນຣະດູຮ້ອນ

### ເຣື້ອງພິກຂຸນີຖຸລລນັນທາ

[໑໗໓] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທຣເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິດ ົກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີຖຸລລນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາ ມາດກ່າວລັມມີກຖາ ສມັຍນັ້ນໃນຣະດູຮ້ອນ ພຣະເຈົ້າປເສນທິໂກສົລຊົງຜ້າເປືອກໄມ້ຣາຄາແພງ ເຂົ້າໄປຫາພິກຂຸນີຖຸລລນັນທາເຖິງທີ່ຢູ່ ຊົງອພິວາທແລ້ວປະທັບນັ່ງ ຓະ ທີ່ສົມຄວຣ ພິກຂຸນີຖຸລ ລນັນທາຊີ້ແຈງໃຫ້ພຣະເຈົ້າປເສນທິໂກສົລຜູ້ປະທັບນັ່ງຓະ ທີ່ສົມຄວຣໃຫ້ເຫັນແຈ້ງ ຊວນ ໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາຈຫານເກັ່ງກ້າປອບປະໂລມໃຈໃຫ້ສົດຊື່ນເບີກບານ ດ້ວຍລັມມີກຖາ ລຳດັບນັ້ນ ພຣະເຈົ້າປເສນທິໂກສົລຜູ້ຊຶ່ງພິກຂຸນີຖຸລລນັນທາຊີ້ແຈງໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາຈຫານເກັ່ງກ້າປອບປະໂລມໃຈໃຫ້ສົດຊື່ນເບີກບານ ດ້ວຍລັມມີກຖາແລ້ວ ໄດ້ຕຣັສກັບພິກຂຸນີຖຸລລນັນທາດັ່ງນີ້ວ່າ “ແມ່ເຈົ້າ ທ່ານຕ້ອງການສິ່ງໃດກໍ ໂປຣດໄດ້ບອກເຖີດ” ພິກຂຸນີຖຸລລນັນທານັ້ນທູລວ່າ “ຂໍຖວາຍພຣະພອນ ຖ້າພຣະອົງຄ໌ມີພຣະຣາຊ ປະສົງຄ໌ຈະພຣະຣາຊທານ ກໍຂໍໄດ້ໂປຣດພຣະຣາຊທານຜ້າເປືອກໄມ້ຜືນນີ້ເຖີດ” ຄັ້ງນັ້ນ ພຣະເຈົ້າປ ເສນທິໂກສົລຖວາຍຜ້າເປືອກໄມ້ຜືນນັ້ນແກ່ພິກຂຸນີຖຸລລນັນທາສເດັຈລຸກຈາກທີ່ປະທັບນັ່ງແລ້ວຊົ ງອພິວາທພິກຂຸນີຖຸລລນັນທາແລ້ວ ທຳປຣະທັກສິຓ(ວຽນໄປທາງຂວາ)ສເດັຈຈາກໄປພວກຊາວ ບ້ານ ຕຳຫນິ ປະນາມ ໂພນທະນາວ່າ “ພວກພິກຂຸນີເປັນຄົນມັກມາກບໍ່ສັນໂດສ ຈັ່ງໃດຈຶ່ງອອກ ປາກທູລຂໍຜ້າເປືອກໄມ້ຈາກພຣະຣາຊາລະ” ພິກຂຸນີທັງຫລາຍໄດ້ຍິນພວກຊາວບ້ານຕຳຫນິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດແມ່ ເຈົ້າຖຸລລນັນທາ ຈຶ່ງອອກປາກທູລຂໍຜ້າເປືອກໄມ້ຈາກພຣະຣາຊາລະ” ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະ ກາຄໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸ

ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີຖຸລລນັນທາອອກປາກທູລຂໍຜ້າເປືອກໄມ້ຈາກພຣະຣາຊາ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທລເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີຖຸລລນັນທາຈຶ່ງອອກປາກທູລຂໍຜ້າເປືອກໄມ້ຈາກພຣະຣາຊາລະ ພິກຂຸທັງຫລາຍການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໕໙] ກໍພິກຂຸນີເມື່ອຈະຂໍຜ້າຫົ່ມບາງ ຄວນຂໍໄດ້ພຽງຣາຄາ ໔ ກັງສະເຄິ່ງເປັນຢ່າງຫລາຍ ຖ້າຂໍເກີນກວ່ານັ້ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ເຣື້ອງພິກຂຸນີຖຸລລນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໘໐] ທີ່ຊື່ວ່າ ຜ້າຫົ່ມບາງ ໄດ້ແກ່ ຜ້າຫົ່ມຊະນິດນຶ່ງທີ່ໃຊ້ໃນຣະດູຮ້ອນ໑

ຄຳວ່າ ເມື່ອຈະຂໍ ຄື ເມື່ອຈະອອກປາກຂໍ

ຄຳວ່າ ຄວນຂໍໄດ້ພຽງຣາຄາ ໔ ກັງສະເຄິ່ງເປັນຢ່າງຫລາຍ ຄື ຄວນຂໍຜ້າມີຣາຄາ ໑໐ ກຫາປຕະໄດ້

**ໝາຍເຫດ :**

໑ ໝາຍເຖິງຜ້າຫົ່ມເນື້ອບາງສຳລັບຫົ່ມໃນຣະດູຮ້ອນ (ອຸຕຶຫາກາເລ ທີ ມນຸສິສາ ສຸຂຸມປາວຸຣຕໍ ປາຣຸປນິຕິ -ປາຈິຕິຍາທິ-ໂຍຊນາ ໗໗໕/໑໕໗ ມ. )

ຄຳວ່າ ຖ້າຂໍເກີນກວ່ານັ້ນ ຄວາມວ່າ ພິກຂຸນີອອກປາກຂໍຜ້າຣາຄາເກີນກວ່ານັ້ນ ຕ້ອງອາບັຕິທຸກກຍໃນຂະນະທີ່ຂໍ ຜ້ານັ້ນເປັນນິສສັຄຄີຍ໌ເພາະໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຄ໌ ແກ່ຄຕະຫລືແກ່ພິກຂຸນີຮູບດຽວ ພິກຂຸທັງຫລາຍ ພິກຂຸນີຄວນສລະຜ້າຫົ່ມບາງທີ່ເປັນນິສສັຄຄີຍ໌ຢ່າງນີ້

**ວິທີສລະຜ້າຫົ່ມທີ່ເປັນນິສສັຄຄີຍ໌**

**ສລະແກ່ສົງຄ໌**

ກິກຂຸນີຮູບນັ້ນຄວນເຂົ້າໄປຫາສົງຄ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນກິກຂຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຜ້າຫົ່ມບາງຜືນນີ້ຣາຄາເກີນ ໔ ກັງສະເຄິ່ງ ຂະນ້ອຍຂໍມາ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະຜ້າຫົ່ມບາງຜືນນີ້ແກ່ສົງຄ໌" ຄັນສລະແລ້ວຄວນສະແດງອາບັຕິ ກິກຂຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຜ້າຫົ່ມບາງທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວາຈາ ວ່າ "ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ຜ້າຫົ່ມບາງຜືນນີ້ຂອງກິກຂຸນີຊື່ນີ້ເປັນນິສສັຄຄີຍ໌ທ່ານສລະແກ່ສົງຄ໌ ຖ້າສົງຄ໌ພ້ອມກັນແລ້ວຄວນຄືນຜ້າຫົ່ມບາງຜືນນີ້ໃຫ້ແກ່ກິກຂຸນີຊື່ນີ້"

ສລະແກ່ຄຕະກິກຂຸນີຮູບນັ້ນຄວນເຂົ້າໄປຫາກິກຂຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງຂາບຕີນກິກຂຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສລະຜ້າຫົ່ມບາງຜືນນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ "ຯລຯ ຄວນຄືນຜ້າຫົ່ມບາງຜືນນີ້ໃຫ້ແກ່ກິກຂຸນີຊື່ນີ້"

**ສລະແກ່ບຸຄຄົລ**

ກິກຂຸນີຮູບນັ້ນຄວນເຂົ້າໄປຫາກິກຂຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຜ້າຫົ່ມບາງຜືນນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນສະແດງອາບັຕິ ຯລຯ "ຂະນ້ອຍຄືນຜ້າຫົ່ມບາງຜືນນີ້ໃຫ້ແກ່ແມ່ເຈົ້າ"

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໓. ນິສສັຄຄີຍກັຕຖ໌] ໑. ປັຕຕວັຄ ສິກຂາບົທທີ ໑໔ ອນາປັຕຕິວາຣ

**ບົທກາຊນີຍ໌**

**ຕິກນິສສັຄຄີຍປາຈິຕຕີຍ໌**

[໗໙໑] ຜ້າຫົ່ມບາງຣາຄາເກີນ ໔ ກັງສະເຄິ່ງ ກິກຂຸນີສຳຄັນວ່າເກີນ ຂໍ ຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌

ຜ້າຫົ່ມບາງຣາຄາເກີນ ໔ ກັງສະເຄິ່ງ ກິກຂຸນີບໍ່ແນ່ໃຈ ຂໍ ຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌

ຜ້າຫົ່ມບາງຣາຄາເກີນ ໔ ກັງສະເຄິ່ງ ກິກບຸດີສຳຄັນວ່າຫນ້ອຍກວ່າ ຂໍ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

**ທຸກກຸກກຸຍ**

ຜ້າຫົ່ມບາງຣາຄາຫນ້ອຍກວ່າ ໔ ກັງສະເຄິ່ງ ກິກບຸດີສຳຄັນວ່າເກີນ ຕ້ອງອາບັຕິທຸກກຸຍ
ຜ້າຫົ່ມບາງຣາຄາຫນ້ອຍກວ່າ ໔ ກັງສະເຄິ່ງ ກິກບຸດີບໍ່ແນ່ໃຈ ຕ້ອງອາບັຕິທຸກກຸຍ
ຜ້າຫົ່ມບາງຣາຄາຫນ້ອຍກວ່າ ໔ ກັງສະເຄິ່ງ ກິກບຸດີສຳຄັນວ່າຫນ້ອຍກວ່າ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ກິກບຸດີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໙໔] ໑. ກິກບຸດີຂໍຜ້າຫົ່ມບາງຣາຄາ ໔ ກັງສະເຄິ່ງເປັນຢ່າງຫລາຍ
໒. ກິກບຸດີຂໍຜ້າຫົ່ມບາງຣາຄາຫນ້ອຍກວ່າ ໔ ກັງສະເຄິ່ງ
໓. ກິກບຸດີຂໍຈາກຍາຕ
໔. ກິກບຸດີຂໍຈາກຄົນປວາຣຕາ
໕. ກິກບຸດີຂໍເພື່ອປໂຍດແກ່ຜູ້ອື່ນ
໖. ກິກບຸດີຊື້ມາດ້ວຍຊັພຍ໌ຂອງຕົນ
໗. ກິກບຸດີຈ່າຍຜ້າຣາຄາຖືກຕໍ່ຫາຍົກຜູ້ຕ້ອງການໃຫ້ຈ່າຍຜ້າຣາຄາແພງ
໘. ກິກບຸດີວິກົລຈິຕ
໙. ກິກບຸດີຕົ້ນບັນຍັດ

ສິກຂາບົທທີ ໑໔ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໓. ນິສສັຄຄິຍກັຕຕ໌] ບົທສຣຸປ**

**ບົທສຣຸບ**

ແມ່ເຈົ້າທັງຫລາຍ ລັມຄືນິສສັຄຄິຍປາຈິຕຕີຍ໌ ໓໐ ສິກຂາບົທ໑ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫລາຍໃນລັມຄືນິສສັຄຄິຍປາຈິຕຕີຍ໌ ໓໐ ສິກຂາບົທເຫລົ່ານັ້ນວ່າ “ແມ່ເຈົ້າທັງຫລາຍບໍຣິສຸດຄ໌ແລ້ວຫລື” ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ “ແມ່ເຈົ້າທັງຫລາຍບໍຣິສຸດຄ໌

ແລ້ວຫລື” ຂ້າພະເຈົ້າຂໍຖາມເປັນຄັ້ງທີ ๓ ວ່າ “ແມ່ເຈົ້າທັງຫລາຍບໍຣິສຸດຄົແລ້ວຫລື” ແມ່ເຈົ້າທັງຫລາຍບໍຣິສຸດຄົແລ້ວໃນລັມຕືນິສສັຄຄິຍປາຈິຕຕີຍ໌ ๓໐ ສິກຂາບົທ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມຕິຢ່າງນີ້

ນິສສັຄຄິຍກັຕຫ໌ໃນກິກຂຸນີວິກັງຄ໌ ຈົບ

**ໝາຍເຫດ :**

໑ ນິສສັຄຄິຍປາຈິຕຕີຍ໌ຂອງກິກບຸຕີນີ ๓໐ ສິກຂາບົທ ໃນກິກຂຸນີວິກັງຄ໌ນີ້ສະແດງສະເພາະອສາລາຣຕາສິກຂາບົທ ຄື ກິກບຸສົງຄ໌ບໍ່ຕ້ອງຮັກສາພຽງ ໑໒ ສິກຂາບົທ ທີ່ເຫລືອ ໑໘ ສິກຂາບົທ ຄື

໑. ປຖມກຖິນສິກຂາບົທທີ ໑ ບ່ອນຈີວອນວັຄຂອງກິກບຸສົງຄ໌

໒. ອຸທໂທສິຕສິກຂາບົທທີ ໒ ບ່ອນຈີວອນວັຄຂອງກິກບຸສົງຄ໌

๓. ຕຕິຍກຖິນສິກຂາບົທທີ ๓ ບ່ອນຈີວອນວັຄຂອງກິກບຸສົງຄ໌

໔. ອັຍປາຕກວິຍຢັຕິສິກຂາບົທທີ ໖ ບ່ອນຈີວອນວັຄຂອງກິກບຸສົງຄ໌

໕. ຕຕຸຕຕຣິສິກຂາບົທທີ ໗ ບ່ອນຈີວອນວັຄຂອງກິກບຸສົງຄ໌

໖. ອຸປັກຂຜສິກຂາບົທທີ ໘ ບ່ອນຈີວອນວັຄຂອງກິກບຸສົງຄ໌

໗. ທຸຕິຍອຸປັກຂຜສິກຂາບົທທີ ໙ ບ່ອນຈີວອນວັຄຂອງກິກບຸສົງຄ໌

໘. ຣາຊສິກຂາບົທທີ ໑໐ ບ່ອນຈີວອນວັຄຂອງກິກບຸສົງຄ໌

໙. ຣູປິຍສິກຂາບົທທີ ໘ ບ່ອນໂກສິຍວັຄຂອງກິກບຸສົງຄ໌

໑໐. ຣູປິຍສັງໂວຫາຣສິກຂາບົທທີ ໙ ບ່ອນໂກສິຍວັຄຂອງກິກບຸສົງຄ໌

໑໑. ກຍວິກກຍສິກຂາບົທທີ ໑໐ ບ່ອນໂກສິຍວັຄຂອງກິກບຸສົງຄ໌

໑໒. ອູນປັຍຈພັນຂນສິກຂາບົທທີ ໒ ບ່ອນປັຕຕວັຄຂອງກິກບຸສົງຄ໌

໑๓. ເກສັຊຊສິກຂາບົທທີ ๓ ບ່ອນປັຕຕວັຄຂອງກິກບຸສົງຄ໌

໑໔. ຈີວອນອັຈຈິທານສິກຂາບົທທີ ໕ ບ່ອນປັຕຕວັຄຂອງກິກບຸສົງຄ໌

໑໕. ສຸຕຕວິຍຍັຕຕິສິກຂາບົທທີ ໖ ບ່ອນປັຕຕວັຄຂອງກິກບຸສົງຄ໌

໑໖. ມຫາເປສກາຣສິກຂາບົທທີ ໗ ບ່ອນປັຕຕວັຄຂອງກິກບຸສົງຄ໌

໑໗. ອັຈເຈກຈີວອນສິກຂາບົທທີ ໘ ບ່ອນປັຕຕວັຄຂອງກິກບຸສົງຄ໌

໑໘. ປຣິຕຕສິກຂາບົທທີ ໑໐ ບ່ອນປັຕຕວັຄຂອງກິກບຸສົງຄ໌

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໑ ນິທານວັຕຖຸ ໔. ປາຈິຕຕິຍກັຕຫ໌

ແມ່ເຈົ້າທັງຫລາຍ ສັນຄືປາຈິຕຕິຍ໌ ໑໖໖ ສິກຂາບົທເຫລົ່ານີ້ມາເຖິງອາຣະທີ່ຈະຍົກຂຶ້ນສະແດງ ເປັນຂໍ້ໆຕາມລຳດັບ

### ໑. ລສຸຕວັຄ

ຫມວດວ່າດ້ວຍກະທຽມ

### ສິກຂາບົທທີ ໑

ວ່າດ້ວຍການຂໍກະທຽມ

### ເຣື່ອງພິກຂຸຕີຖຸລລນັນທາ

[໗໙໓] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທລເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິຕ ຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ອຸບາສິກຄົນນຶ່ງປວາຣຕາດ້ວຍກະທຽມກັບພິກຂຸຕີສົງຄ໌ໄວ້ວ່າ "ຜູ້ຂ້າຂໍປວາຣຕາແມ່ເຈົ້າທັງຫລາຍທີ່ຕ້ອງການກະທຽມ ດ້ວຍກະທຽມ" ແລະສັ່ງຄົນເຝົ້າໄຮ່ວ່າ "ຖ້າ ພິກຂຸຕີທັງຫລາຍມາກໍຈົ່ງຖວາຍທ່ານໄປຮູປລະ ໔-໕ ກຳ" ຄັ້ງນັ້ນນມີມຫໍຣສົພໃນກຸງສາວັຕຖີ ກະ ທຽມທີ່ເຂົານຳມາເກັບໄວ້ໄດ້ຫມົດລົງ ພິກຂຸຕີທັງຫລາຍເຂົ້າໄປຫາອຸບາສິກນັ້ນໄດ້ກ່າວດັ່ງນີ້ວ່າ "ພວກເຮົາຕ້ອງການກະທຽມ" ອຸບາສິກນັ້ນກ່າວວ່າ "ແມ່ເຈົ້າທັງຫລາຍ ກະທຽມບໍ່ມີ ກະທຽມທີ່ເຂົາ ນຳມາເກັບໄວ້ຫມົດແລ້ວ ທ່ານທັງຫລາຍໂປຣດໄປທີ່ໄຮ່" ພິກຂຸຕີຖຸລລນັນທາໄປທີ່ໄຮ່ແລ້ວໃຫ້ ນຳກະທຽມໄປເປັນຈຳນວນຫລາຍໂດຍບໍ່ຮູ້ຈັກປະມານ ຄົນເຝົ້າໄຮ່ຈຶ່ງຕຳຫນິ ປະນາມ ໂພນທະນາ ວ່າ "ຈັ່ງໃດພວກພິກຂຸຕີຈຶ່ງໄປທີ່ໄຮ່ແລ້ວໃຫ້ນຳກະທຽມໄປເປັນຈຳນວນຫລາຍ ໂດຍບໍ່ຮູ້ຈັກປະ ມານລະ" ພິກຂຸຕີທັງຫລາຍໄດ້ຍິນຄົນເຝົ້າໄຮ່ຕຳຫນິ ປະນາມ ໂພນທະນາ ບັນດາພິກຂຸຕີຜູ້ມັກ ນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລນັນທາຈຶ່ງໃຫ້ນຳກະທຽມ ໄປເປັນຈຳນວນຫລາຍໂດຍບໍ່ຮູ້ຈັກປະມານລະ" ຄັນແລ້ວພິກຂຸຕີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກ ພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາຄຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸ

ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸຕີຖຸລລນັນທາໃຫ້ນຳກະທຽມໄປເປັນຈຳນວນຫລາຍ ໂດຍບໍ່ຮູ້ຈັກປະມານ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ"ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳຫນິວ່າ "ຯລຯ ພິກຂຸທັງຫລາຍຈັ່ງໃດພິກຂຸຕີຖຸລລນັນທາຈຶ່ງໃຫ້ນຳກະທຽມໄປເປັນຈຳນວນຫລາຍ ໂດຍບໍ່ຮູ້ຈັກປະມານລະພິກຂຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ທີ່ຈິງກັບຈະເຮັດໃຫ້ຄົນທີ່ບໍ່ເຫລື້ອມໃສກໍບໍ່ເຫລື້ອມໃສໄປເລີຍ ຄົນທີ່ເຫລື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ" ຄັນຊົງຕຳຫນິພິກຂຸຕີຖຸລລນັນທາໂດຍປະກາຣຕ່າງໆແລ້ວ ຊົງສະແດງທັມມີກະຖາແກ່ພິກຂຸທັງຫລາຍໃຫ້ເຫມາະສົມໃຫ້ຄ້ອຍຕາມກັບເຣື້ອງນັ້ນ ຮັບສັ່ງກັບພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ເຣື້ອງເຄີຍມີມາແລ້ວ ພິກຂຸຕີຖຸລລນັນທາເຄີຍເປັນກັຣຍາຂອງພຣາມຕ໌ຄົນນຶ່ງ ມີທິດາ ໓ ຄົນ ຊື່ນັນທາ ນັນທວດີ ສຸນທຣີນັນທາ ພິກຂຸທັງຫລາຍ ຕໍ່ມາພຣາມຕ໌ນັ້ນຕາຍໄປເກີດເປັນຫົງສ໌ຕົວນຶ່ງ ມີຂົນເປັນທອງຄຳລ້ວນ ຫົງສ໌ນັ້ນມາສລັດຂົນທອງຄຳ ໃຫ້ແກ່ທິດາເຫລົ່ານັ້ນຄົນລະຂົນ ຕໍ່ມາພິກຂຸຕີຖຸລລນັນທາຄິດວ່າ "ຫົງສ໌ຕົວນີ້ສລັດຂົນໃຫ້ພວກເຮົາຄົນລະຂົນເທົ່ານັ້ນ" ຈຶ່ງຈັບພະຍາຫົງສ໌ຫລົກຂົນຈົນຫມົດ ແຕ່ຂົນທີ່ງອກຂຶ້ນໃຫມ່ກາຍເປັນສີຂາວ ໃນຄັ້ງນັ້ນ ພິກຂຸຕີຖຸລລນັນທາເສື່ອມຈາກທອງຄຳເພາະຄວາມໂລກເກີນໄປ ບັດນີ້ກໍເສື່ອມຈາກກະທຽມ ໄດ້ສິ່ງໃດ ຄວຣພໍໃຈສິ່ງນັ້ນ ຄວາມໂລກເກີນໄປເປັນຄວາມຊົ່ວຮ້າຍ (ເຫມືອນ)ຖຸລລນັນທາຈັບພຍາຫົງສ໌ແລ້ວເສື່ອມຈາກທອງຄຳ"໑

**ໝາຍເຫດ :**

໑ ຂຸ. ຊາ. ໒໗/໑໓໖/໓໔

**ພຣະວິນັຍປິດົກ ພິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໑ ບົທກາຊນີຍ໌**

ເທື່ອນັ້ນ ພຣະຜູ້ມີພຣະກາຄຊົງຕຳຫນິພິກຂຸຕີຖຸລລນັນທາໂດຍປະກາຣຕ່າງໆແລ້ວຮັບສັ່ງໃຫ້ພິກຂຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໙໔] ກໍພິກຂຸນີໃດຈັນກະທຽມ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກຂຸນີຖຸລລນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໙໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ກະທຽມ ພຣະຜູ້ມີພຣະພາຄຕຣັສໝາຍເຖິງ ກະທຽມຊື່ມາຄທິກະ[໑]

ພິກຂຸນີຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຈັນ" ຕ້ອງອາບັຕິທຸກກຏ ຈັນ ຕ້ອງອາບັຕິປາຈິຕຕີຍ໌ທຸກໆຄຳກືນ

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໙໖] ກະທຽມ ພິກຂຸນີສຳຄັນວ່າເປັນກະທຽມ ຈັນ ຕ້ອງອາບັຕິປາຈິຕຕີຍ໌ ກະທຽມ ພິກຂຸນີບໍ່ແນ່ໃຈ ຈັນ ຕ້ອງອາບັຕິປາຈິຕຕີຍ໌ ກະທຽມ ພິກຂຸນີສຳຄັນວ່າບໍ່ແມ່ນກະທຽມ ຈັນ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ຄຳວ່າ "ມາຄທິກະ" ເປັນຊື່ສະເພາະຂອງກະທຽມພັນລຸ໌ນີ້ ເພາະເກີດໃນແຄວ້ນມຄທ ກະທຽມຊນິດນີ້ ນຶ່ງຕົ້ນຈະມີຫລາຍຫົວຕິດກັນເປັນພວງ ບໍ່ແມ່ນຫົວດຽວ (ວິ. ອ. ໒/໗໙໕/໔໗໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໑ ອນາປັຕຕິວາຣ**

**ທຸກທຸກກຏ**

ບໍ່ແມ່ນກະທຽມ ພິກຂຸນີສຳຄັນວ່າເປັນກະທຽມ ຈັນ ຕ້ອງອາບັຕິທຸກກຏ

ບໍ່ແມ່ນກະຫຽມ ພິກຂຸນີບໍ່ແນ່ໃຈ ຈັນ ຕ້ອງອາບັຕິທຸກກົດ
ບໍ່ແມ່ນກະຫຽມ ພິກຂຸນີສຳຄັນວ່າບໍ່ແມ່ນກະຫຽມ ຈັນ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗ດ໗] ໑. ພິກຂຸນີຈັນກະຫຽມເຫລືອງ໑

໒. ພິກຂຸນີຈັນກະຫຽມແດງ

໓. ພິກຂຸນີຈັນກະຫຽມຂຽວ

໔. ພິກຂຸນີຈັນກະຫຽມຕົ້ນດຽວ

໕. ພິກຂຸນີຈັນກະຫຽມປຸງໃນແກງ

໖. ພິກຂຸນີຈັນກະຫຽມປຸງໃນຊີ້ນ

໗. ພິກຂຸນີຈັນກະຫຽມຈືນນ້ຳມັນ

໘. ພິກຂຸນີຈັນກະຫຽມປຸງໃນຍຳຜັກສົດ

໙. ພິກຂຸນີຈັນກະຫຽມປຸງໃນແກງອ່ອມ

໑໐. ພິກຂຸນີວິກົລຈິຕ

໑໑. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໑ ຈົບ

**ໝາຍເຫດ :**

໑ ກະຫຽມຊນິດອື່ນໆມີລັກษณะຕ່າງໆຈາກກະຫຽມມາຄລິກະ ສະເພາະສີແລະເຍື່ອເທົ່ານັ້ນ (ວິ. ອ. ໒/໗ດ໗/໔໘໘) ແຕ່ພຣະວິນັຍປິດົກ ແປແລະຮຽບຮຽງຈາກ ສະບັບ “PALI TEXT SOCIETY ກ່າວວ່າ ຄຳວ່າ “ກະຫຽມເຫລືອງ” ຫມາຍເຖິງຫົວຫອມ “ກະຫຽມແດງ” ຫມາຍເຖິງຫົວຜັກກາດ “ກະຫຽມຂຽວ” ຫມາຍເຖິງສມໍເຫລືອງ (ດູ The Book of the Discipline Vol. III, PP ໒໔໕, PTS. )

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຓຫ໌] ໑. ລສຸຓວັຄ ສິກຂາບົທທີ ໔ ນິທານວັຕຖຸ ໑. ລສຸຓວັຄ

### ສິກຂາບົທທີ ໔

ວ່າດ້ວຍການຫລິກຂິນໃນທີ່ແຄບ

### ເຣື້ອງພິກຂຸນີຈັພພັຄຄີຍ໌

[໗ລ໗] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທສເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິຕ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກຂຸນີຈັພພັຄຄີຍ໌ໃຫ້ຫລິກຂິນໃນທີ່ແຄບ ເປືອຍກາຍ ອາບນ້ຳທ່າດຽວກັນກັບພວກຍິງແພສຍາ ໃນແມ່ນ້ຳອຈິຣວດີ ພວກຍິງແພສຍາຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸນີຈຶ່ງໃຫ້ຫລິກຂິນໃນທີ່ແຄບເໝືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄ ກາມລະ" ພິກຂຸນີທັງຫລາຍໄດ້ຍິນພວກຍິງແພສຍາຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸນີຈັພພັຄຄີຍ໌ຈຶ່ງໃຫ້ຫລິກຂິນໃນທີ່ແຄບລະ" ຄັນແລ້ວພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

### ຊົງປະຊຸມສົງຫ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຫ໌ເພາະເຣື້ອງນີ້ເປັນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພວກພິກຂຸນີຈັພພັຄຄີຍ໌ໃຫ້ຫລິກຂິນໃນທີ່ແຄບ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພວກພິກຂຸນີຈັພພັຄຄີຍ໌ຈຶ່ງໃຫ້ຫລິກຂິນໃນທີ່ແຄບລະ ພິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງ ດັ່ງນີ້

### ພຣະບັນຍັດ

[໗ລລ] ກໍພິກຂຸນີໃດໃຫ້ຫລິກຂິນໃນທີ່ແຄບ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກຂຸນີຈັພພັຄຄີຍ໌ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕທ໌] ໑. ລສຸຕວັຄ ສິກຂາບົທທີ ໔ ອນາປັຕຕິວາຣ

### ສິກຂາບົທວິກັງຄ໌

[໗໐໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ກິກຂຸນີ ມີອະທິບາຍວ່າ ຊື່ວ່າກິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກຂຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ທີ່ແຄບ ຄື ຮັກແຮ້ທັງ ໔ ຂ້າງ ບໍຣິເວຕອົງຄ໌ກຳເນີດ

ຄຳວ່າ ໃຫ້ຖອນ ຄື ໃຫ້ຫລົກຂົນ ແມ່ນເສັ້ນດຽວ ຕ້ອງອາບັຕິປາຈິຕຕີຍ໌ ໃຫ້ຫລົກຂົນຫລາຍເສັ້ນຕ້ອງອາບັຕິປາຈິຕຕີຍ໌

### ອນາປັຕຕິວາຣ

ກິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໐໑] ໑. ກິກຂຸນີຫລົກຂົນເພາະອາພາຣເປັນເຫຕຸ[1]

໔. ກິກຂຸນີວິກົລຈິຕ

໖. ກິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໔ ຈົບ

**ໝາຍເຫດ :**

[1] ຄືເພາະເປັນທີດ ເພາະຄັນ (ວິ. ອ. ໔/໗໐໑/໔໗໘)

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕທ໌] ໑. ລສຸຕວັຄ ສິກຂາບົທທີ ໖ ນິທານວັຕຖຸ ໑. ລສຸຕວັຄ

### ສິກຂາບົທທີ ໖

ວ່າດ້ວຍການສັມຜັສອົງຄ໌ກຳເນີດ

**ເລື້ອງພິກຂຸນີ ໔ ຮູບ**

[ກຼ໐໔] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທສເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຮາມຂອງອນາຖບິຕ ພິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີ ໔ ຮູບຖືກຄວາມບໍ່ຍິນດີບີບຄັ້ນ ຈຶ່ງເຂົ້າໄປສູ່ຫ້ອງ ຊຸ້ນໃນແລ້ວໃຊ້ຝ່າມືຕົບອົງຄ໌ກຳເນີດກັນ ພິກຂຸນີທັງຫລາຍພາກັນແລ່ນເຂົ້າໄປຕາມສຽງນັ້ນແລ້ວ ໄດ້ກ່າວກັບພິກຂຸນີທັງ ໔ ຮູບນັ້ນດັ່ງນີ້ວ່າ "ແມ່ເຈົ້າ ເປັນຫຍັງພວກທ່ານຈຶ່ງທຳມິດີມີຮ້າຍກັບຊາຍ ລະ໑ ພິກຂຸນີທັງສອງຕອບວ່າ "ພວກຂະນ້ອຍບໍ່ໄດ້ທຳມິດີມີຮ້າຍກັບຊາຍ" ແລ້ວເລົ່າເລື້ອງນັ້ນໃຫ້ ພິກຂຸນີທັງຫລາຍຊາບ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກຂຸນີທັງຫລາຍຈຶ່ງໃຊ້ມືຕົບອົງຄ໌ກຳເນີດກັນລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳ ເລື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະ ພາຄໃຫ້ຊົງຊາບ

**ຊົງປະຊຸມສົງฆ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງฆ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸ ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີທັງຫລາຍໃຊ້ຝ່າມືຕົບອົງຄ໌ກຳເນີດກັນ ແມ່ນ ແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທສເຈົ້າຊົງ ຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີທັງຫລາຍຈຶ່ງໃຊ້ຝ່າມືຕົບອົງຄ໌ກຳເນີດກັນລະ ພິກຂຸທັງຫລາຍ ກາຣເຮັດຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ

**ໝາຍເຫດ :**

໑ ຫມາຍເຖິງມີຄວາມສັມພັນສ໌ກັນໃນທາງຊູ້ສາວ

ໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນ ຯລຯ" ແລ້ວຈຶ່ງຮັບ ສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[ກຼ໐໕] ພິກຂຸນີຕ້ອງອາບັຕິປາຈິຕຕິຍ໌ ເພາະໃຊ້ຝ່າມືຕົບອົງຄ໌ກຳເນີດ

ເລື້ອງພິກຂຸນີ ໔ ຮູບ ຈົບ

**ສິກຂາບົທວິພັງຄ໌**

[໗໐໔] ທີ່ຊື່ວ່າ ໃຊ້ຝ່າມືຕົບອົງຄ໌ກຳເນີດ ຄື ພິກຂຸນີຍິນດີການສັມຜັສ ໂດຍທີ່ສຸດໃຊ້ກາບບົວຕີທີ່ອົງຄ໌ກຳເນີດ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໐໕] ໑. ພິກຂຸນີສັມຜັສເພາະອາພາລເປັນເຫຕຸ໑

໔. ພິກຂຸນີວິກລຈິຕ

໕. ພິກຂຸນີຕົ້ນບັນຍັດ

**ສິກຂາບົທທີ ໓ ຈົບ**

**ໝາຍເຫດ :**

໑ ຄືຈະບົບຝີຫລືແຜ (ວິ. ອ. ໔/໗໐໕/໔໙໐)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໔ ນິທານວັຕຖຸ ໑. ລສຸຕວັຄ**

**ສິກຂາບົທທີ ໔**

ວ່າດ້ວຍການໃຊ້ທ່ອນຍາງ

## ເຣື້ອງພິກຂຸນີຮູບນຶ່ງ

[໗໐໖] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທຄເຈົ້າປະທັບຢູ່ ຕະພຣະເຊຕວັນ ອາຮາມຂອງອນາຖບິຕທີກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ອດີຕນາງສນົມຂອງພຣະຣາຊາໄປບວຊຢູ່ໃນສຳນັກພິກຂຸນີ ພິກຂຸນີຮູບນຶ່ງຖືກຄວາມບໍ່ຍິນດີຍິ່ງບີບຄັ້ນ ຈຶ່ງເຂົ້າໄປຫາພິກຂຸນີ(ຜູ້ເຄີຍເປັນນາງສນົມ)ນັ້ນເຖິງທີ່ຢູ່ຄັນເຖິງແລ້ວ ໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ “ແມ່ເຈົ້າພຣະຣາຊາສເດັຈໄປຫາທ່ານດົນໆຄັ້ງ ທ່ານທົນຢູ່ໄດ້ຢ່າງໃດ” ພິກຂຸນີນັ້ນຕອບວ່າ “ແມ່ເຈົ້າ ຂະນ້ອຍໃຊ້ທ່ອນຍາງ” ພິກຂຸນີນັ້ນຖາມວ່າ “ແມ່ເຈົ້າ ທ່ອນຍາງນີ້ເປັນຢ່າງໃດ” ລຳດັບນັ້ນ ພິກຂຸນີຜູ້ເຄີຍເປັນນາງສນົມບອກທ່ອນຍາງແກ່ພິກຂຸນີ

ນັ້ນ ຕໍ່ມາພິກຂຸນີນັ້ນໃຊ້ທ່ອນຍາງແລ້ວລືມລ້າງວາງຖິ້ມໄວ້ໃນທີ່ແຫ່ງນຶ່ງ ພິກຂຸນີທັງຫລາຍເຫັນທ່ອນຍາງມີແມງວັນຕອມຈຶ່ງຖາມວ່າ "ນີ້ເປັນການກະທຳຂອງໃຜ" ພິກຂຸນີນັ້ນກ່າວຢ່າງນີ້ວ່າ "ນີ້ເປັນການກະທຳຂອງຂະນ້ອຍເອງ "ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກຂຸນີຈຶ່ງໃຊ້ທ່ອນຍາງລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງ ຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີໃຊ້ທ່ອນຍາງ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທສເຈົ້າຊົງຕຳໜິ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໔ ອນາປັຕຕິວາຣ

ວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີຈຶ່ງໃຊ້ທ່ອນຍາງລະ ພິກຂຸທັງຫລາຍ ການກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໐໗] ພິກຂຸນີຕ້ອງອາບັຕິປາຈິຕຕີຍ໌ ເພາະໃຊ້ທ່ອນຍາງ

ເລື້ອງພິກຂຸນີຮູບນຶ່ງ ຈົບ

**ສິກຂາບົທວິພັງຄ໌**

[໗໐໘] ທີ່ຊື່ວ່າ ທ່ອນຍາງ ໄດ້ແກ່ ສິ່ງທີ່ເຮັດດ້ວຍຍາງ ທ່ອນຍາງທີ່ເຮັດດ້ວຍໄມ້ ທ່ອນຍາງທີ່ເຮັດດ້ວຍແປ້ງ ທ່ອນຍາງທີ່ເຮັດດ້ວຍດິນ ພິກຂຸນີຍິນດີການສັມຜັສໂດຍທີ່ສຸດແມ່ນສອດກີບອຸບົລເຂົ້າອົງຄ໌ກຳເນີດ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**
ກິກບຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໐໙] ໑. ກິກບຸຕີໃຊ້ທ່ອນຢາງເພາະອາພາຣເປັນເຫຕຸ
໔. ກິກບຸຕີວິກົລຈິຕ
໖. ກິກບຸຕີຕົ້ນບັນຍັດ

ສິກຂາບົທທີ ໔ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໕ ນິທານວັຕຖຸ**
**໑. ລສຸຕວັຄ**

**ສິກຂາບົທທີ ໕**
ວ່າດ້ວຍກາຣໃຊ້ນໍ້າຊໍາຣະ

**ເຣື່ອງພຣະນາງມຫາປຊາບໍດີໂຄຕມີ**
[໗໑໐] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຕະ ນິໂຄຣລາຣາມ ເຂຕກຸງກບິລພັສດຸ໌ ແຄວັນສັກກະ ຄັ້ງນັ້ນ ພຣະນາງມຫາປຊາບໍດີໂຄຕມີເຂົ້າໄປເຝົ້າພຣະຜູ້ມີພຣະກາຄເຖິງທີ່ປະທັບ ຄັນເຖິງແລ້ວ ຖວາຍອກິວາທແລ້ວຢືນໃນທີ່ໃຕ້ລົມ ຂາບທູລວ່າ"ຂ້າແຕ່ພຣະຜູ້ມີພຣະກາຄ ມາຕຸຄາມກິ່ນບໍ່ດີ" ຄັ້ງນັ້ນ ພຣະຜູ້ມີພຣະກາຄຕຣັສວ່າ "ກິກບຸຕີທັງຫລາຍຈົ່ງໃຊ້ນໍ້າຊໍາຣະທໍາຄວາມສະອາດ" ຊົງຊີ້ແຈງໃຫ້ພຣະນາງມຫາປຊາບໍດີໂຄຕມີເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາຈຫານເກັ່ງກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍລັມມີກຖາ ລໍາດັບນັ້ນ ພຣະນາງມຫາປຊາບໍດີໂຄຕມີຜູ້ຊຶ່ງພຣະຜູ້ມີພຣະກາຄຊີ້ແຈງໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດປຸກໃຈໃຫ້ອາຈຫານເກັ່ງກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍລັມມີກຖາແລ້ວ ຖວາຍອກິວາທພຣະຜູ້ມີພຣະກາຄ ກະທໍາປຣະທັກສິຕ(ວຽນໄປທາງຂວາ)ແລ້ວຈາກໄປພຣະຜູ້ມີພຣະກາຄຊົງສະແດງລັມມີກຖາເພາະເຣື່ອງນີ້ເປັນຕົ້ນເຫຕຸ ຮັບສັ່ງກັບກິກບຸທັງຫລາຍວ່າ "ກິກບຸທັງຫລາຍ ເຮົາອນຸຍາຕໃຫ້ກິກບຸຕີໃຊ້ນໍ້າຊໍາຣະທໍາຄວາມສະອາດໄດ້"

ເຣື່ອງພຣະນາງມຫາປຊາບໍດີໂຄຕມີ ຈົບ

**ເລື້ອງພິກຂຸນີຮູບນຶ່ງ**

ສມັຍນັ້ນ ພິກຂຸນີຮູບນຶ່ງຊາບວ່າ "ພຣະຜູ້ມີພຣະກາຄຊົງອນຸຍາຕນ້ຳຊຳຣະທຳຄວາມສະອາດ" ຈຶ່ງໃຊ້ນ້ຳຊຳຣະທຳຄວາມສະອາດເລິກເກີນໄປ ເຮັດໃຫ້ເກີດແຜຂຶ້ນທີ່ອົງຄ໌ກຳເນີດຄັ້ງນັ້ນ ທ່ານບອກເລື້ອງນັ້ນໃຫ້ພິກຂຸນີທັງຫລາຍຊາບ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກຂຸນີໃຊ້ນ້ຳຊຳຣະທຳຄວາມສະອາດເລິກເກີນໄປລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເລື້ອງນັ້ນເປັນຕົ້ນເຫຕຸຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີໃຊ້ນ້ຳຊຳຣະທຳຄວາມສະອາດເລິກເກີນໄປ ແມ່ນແທ້ບໍ່" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທລເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີຈຶ່ງໃຊ້ນ້ຳຊຳຣະທຳຄວາມສະອາດເລິກເກີນໄປລະ ພິກຂຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໓໑໑] ກໍພິກຂຸນີຜູ້ຈະໃຊ້ນ້ຳຊຳຣະທຳຄວາມສະອາດ ຄວນໃຊ້ນ້ຳຊຳຣະທຳຄວາມສະອາດເລິກພຽງ ໒ ຂໍ້ອົງຄຸລີເປັນຢ່າງຫລາຍ ໃຫ້ເກີນກຳໜົດນັ້ນ ຕ້ອງອາບັຕິປາຈິຕຕີຍ໌

ເລື້ອງພິກຂຸນີຮູບນຶ່ງ ຈົບ

**ສິກຂາບົທວິກັງຄ໌**

[໓໑໒] ທີ່ຊື່ວ່າ ນ້ຳຊຳຣະທຳຄວາມສະອາດ ພຣະຜູ້ມີພຣະກາຄຕຣັສໝາຍເຖິງນ້ຳຊຳຣະບໍຣິເວຕອົງຄ໌ກຳເນີດ

ຄຳວ່າ ຜູ້ຈະໃຊ້ ຄື ຜູ້ຊະລ້າງ

ຄຳວ່າ ຄວນໃຊ້ນ້ຳຊຳຣະທຳຄວາມສະອາດເລິກພຽງ ໒ ຂໍ້ອົງຄຸລີເປັນຢ່າງຫລາຍຄືໃຊ້ນ້ຳຊຳຣະນິກພຽງ ໒ ຂໍ້ໃນ ໒ ອົງຄຸລີເປັນຢ່າງຫລາຍ

ຄຳວ່າ ໃຫ້ເກີນກຳຫນົດນັ້ນ ຄວາມວ່າ ພິກຂຸນີຍິນດີການສັມຜັສໃຫ້ລ່ວງເລີຍເຂົ້າໄປໂດຍທີ່ສຸດພຽງປາຍເສັ້ນຜົມ ຕ້ອງອາບັດປາຈິຕຕິຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຓທ໌] ໑. ລສຸຓວັຄ ສິກຂາບົທທີ ໕ ອນາປັຕຕິວານ**

**ບົທການຸນີຍ໌**

**ຕິກປາຈິຕຕິຍ໌**

[ກຼ໑໓] ເກີນ ໔ ຂໍ້ອົງຄຸລີ ພິກຂຸນີສຳຄັນວ່າເກີນ ຊຳຣະ ຕ້ອງອາບັດປາຈິຕຕິຍ໌
ເກີນ ໔ ຂໍ້ອົງຄຸລີ ພິກຂຸນີບໍ່ແນ່ໃຈ ຊຳຣະ ຕ້ອງອາບັດປາຈິຕຕິຍ໌
ເກີນ ໔ ຂໍ້ອົງຄຸລີ ພິກຂຸນີສຳຄັນວ່າຫນ້ອຍກວ່າ ຊຳຣະ ຕ້ອງອາບັດປາຈິຕຕິຍ໌

**ທຸກທຸກກະ**

ຫນ້ອຍກວ່າ ໔ ຂໍ້ອົງຄຸລີ ພິກຂຸນີສຳຄັນວ່າເກີນ ຕ້ອງອາບັດທຸກກະ
ຫນ້ອຍກວ່າ ໔ ຂໍ້ອົງຄຸລີ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກະ
ຫນ້ອຍກວ່າ ໔ ຂໍ້ອົງຄຸລີ ພິກຂຸນີສຳຄັນວ່າຫນ້ອຍກວ່າ ບໍ່ຕ້ອງອາບັດ

**ອນາປັຕຕິວານ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື
[ກຼ໑໔] ໑. ພິກຂຸນີຊຳຣະນຶກພຽງ ໔ ຂໍ້ອົງຄຸລີເປັນຢ່າງຫລາຍ
໒. ພິກຂຸນີຊຳຣະນຶກບໍ່ເຖິງ ໔ ຂໍ້ອົງຄຸລີ
໓. ພິກຂຸນີຊຳຣະນຶກເກີນເພາະອາພາລເປັນເຫຕຸ
໔. ພິກຂຸນີວິກົລຈິຕ
໕. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໕ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ຝ ນິທານວັຕຖຸ ໑. ລສຸຕວັຄ

### ສິກຂາບົທທີ ຝ

ວ່າດ້ວຍການປັນນິບັຕິ

### ເຣື້ອງກິກຸຕີວດີຕກັຣຍາມຫາອມາຕຍ໌

[ກຼ໑໕] ສມັຍນັ້ນ ພຣະຜູ້ມີພຣະການພຸທສເຈົ້າປະທັບຢູ່ ຕະ ພຣະເຊຕວັນ ອາຣາມຂອງອນາຖບິຕ ຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ມຫາອມາຕຍ໌ຊື່ອາໄຣທັນຕະບວຊໃນສຳນັກກິກຂຸ ວດີຕກັຣຍາ ຂອງທ່ານບວຊໃນສຳນັກກິກຸຕີ ຕໍ່ມາ ກິກຸນັ້ນຮ່ວມຈັນກັຕຕາຫານໃນສຳນັກຂອງກິກຸຕີນັ້ນ ຂຕະທີ່ທ່ານກຳລັງຈັນ ກິກຸຕີນັ້ນເຂົ້າໄປຢືນປັນນິບັຕິຢູ່ໃກ້ໆດ້ວຍນ້ຳຈັນແລະການພັດວີ ເວົ້າກ່ງວ ກັບເຣື້ອງຄອບຄົວ ເວົ້າຫລາຍເກີນໄປ ລຳດັບນັ້ນ ກິກຸນັ້ນຈຶ່ງຕໍ່ວ່າກິກຸຕີນັ້ນວ່າ "ນ້ອງຍິງຢ່າໄດ້ ເຮັດຢ່າງນີ້ ເຣື້ອງນີ້ບໍ່ສົມຄວຣ" ກິກຸຕີນັ້ນກ່າວວ່າ "ເມື່ອກ່ອນທ່ານເຮັດຢ່າງນີ້ໆກັບຂະນ້ອຍ ບັດນີ້ ພຽງເທົ່ານີ້ກໍທົນບໍ່ໄດ້" ຈຶ່ງຂ້ອມຂັນນ້ຳລົງເທິງສີສະແລ້ວໃຊ້ພັດຕີ ບັນດາກິກຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດກິກຸຕີຈຶ່ງຕີກິກຸລະ" ຄັນແລ້ວ ກິກຸຕີເຫລົ່ານັ້ນ ໄດ້ນຳເຣື້ອງນີ້ໄປບອກກິກຸທັງຫລາຍໃຫ້ຊາບ ພວກກິກຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີ ພຣະການໃຫ້ຊົງຊາບ

### ຊົງປະຊຸມສົງຆ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະການຮັບສັ່ງໃຫ້ປະຊຸມສົງຆ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຸ ທັງຫລາຍວ່າ "ກິກຸທັງຫລາຍ ຊາບວ່າ ກິກຸຕີຕີກິກຸ ແມ່ນແທ້ບໍ່" ກິກຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະການພຸທສເຈົ້າຊົງຕຳຫນິວ່າ "ຯລຯ ກິກຸທັງຫລາຍ ຈັ່ງ ໃດກິກຸຕີຈຶ່ງຕີກິກຸລະ ກິກຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ ໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ຝ ບົທການຸນິຍ໌ ພຣະບັນຍັດ

[໗໑໕] ກໍ່ພິກຂຸນີໃດປືນນິບັດພິກຂຸຜູ້ກຳລັງສັນຢູ່ດ້ວຍນ້ຳດື່ມຫລືດ້ວຍກາຣພັດວີ ຕ້ອງອາບັດ ປາຈິດຕີຍ໌

ເຣື່ອງອດີດກັຣຍາຂອງມຫາອມາຕຍ໌ ຈົບ

**ສິກຂາບົທວິກັງຄ໌**

[໗໑໗] ຄຳວ່າ ກໍ່. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ່. . . ໃດ
ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ພິກຂຸນີນີ້ພຣະຜູ້ມີພຣະກາຄຊົງ ປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມໝາຍນີ້
ຄຳວ່າ ພິກຂຸ ຄື ອຸປສັມບັນ
ຄຳວ່າ ຜູ້ກຳລັງສັນຢູ່ ຄື ຜູ້ກຳລັງສັນໂກຊນະ ៥ ຢ່າງໃດຢ່າງນຶ່ງ
ທີ່ຊື່ວ່າ ນ້ຳດື່ມ ໄດ້ແກ່ ນ້ຳດື່ມຊນິດໃດຊນິດນຶ່ງ
ທີ່ຊື່ວ່າ ກາຣພັດວີ ໄດ້ແກ່ ພັດຊນິດໃດຊນິດນຶ່ງ
ຄຳວ່າ ປືນນິບັດຢູ່ ຄວາມວ່າ ຢືນຢູ່ໃນຣະຍະຫັດຖບາສ ຕ້ອງອາບັດປາຈິດຕີຍ໌

**ບົທກາຊນີຍ໌**

**ຕິກປາຈິດຕີຍ໌**

[໗໑໘] ອຸປສັມບັນ໑ ພິກຂຸນີສຳຄັນວ່າເປັນອຸປສັມບັນ ປືນນິບັດຢູ່ດ້ວຍນ້ຳດື່ມຫລືກາຣພັດວີ ຕ້ອງ ອາບັດປາຈິດຕີຍ໌
ອຸປສັມບັນ ພິກຂຸນີບໍ່ແນ່ໃຈ ປືນນິບັດຢູ່ດ້ວຍນ້ຳດື່ມຫລືກາຣພັດວີ ຕ້ອງອາບັດປາຈິດຕີຍ໌

**ໝາຍເຫດ :**
໑ "ອຸປສັມບັນ" ໃນທີ່ນີ້ໝາຍເຖິງພິກຂຸທີ່ພິກຂຸນີນັ້ນປືນນິບັດ

ອຸປສັມບັນ ພິກຂຸນີສຳຄັນວ່າເປັນອນຸປສັມບັນ ປືນນິບັດຢູ່ດ້ວຍນ້ຳດື່ມຫລືກາຣພັດວີ ຕ້ອງອາບັດ ປາຈິດຕີຍ໌ທຸກກົຏ
ພິກຂຸນີປືນນິບັດຢູ່ນອກຫັດຖບາສ ຕ້ອງອາບັດທຸກກົຏ
ພິກຂຸກຳລັງຄ້ຽວຂອງຄ້ຽວ ພິກຂຸນີເຂົ້າໄປປືນນິບັດ ຕ້ອງອາບັດທຸກກົຏ

ພິກຂຸຕີເຂົ້າໄປປົນນິບັຕິອນຸປສັມບັນ ຕ້ອງອາບັຕິທຸກກຍ
ອນຸປສັມບັນ ພິກຂຸຕີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກຍ
ອນຸປສັມບັນ ພິກຂຸຕີບໍ່ແນ່ໃຈ ຕ້ອງອາບັຕິທຸກກຍ
ອນຸປສັມບັນ ພິກຂຸຕີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກຍ

**ອນາປັຕຕິວາຣ**

ພິກຂຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໑໙] ໑. ພິກຂຸຕີຖວາຍ
໒. ພິກຂຸຕີໃຫ້ຄົນອື່ນຖວາຍ
໓. ພິກຂຸຕີສັ່ງອນຸປສັມບັນໃຫ້ປົນນິບັຕິ
໔. ພິກຂຸຕີວິກົລຈິຕ
໕. ພິກຂຸຕີຕົ້ນບັນຍັດ

ສິກຂາບົທທີ ໖ ຈົບ

**ພຣະວິນັຍປິດົກ ພິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໗ ນິທານວັຕຖຸ**
**໑. ລສຸຕວັຄ**

**ສິກຂາບົທທີ ໗**

ວ່າດ້ວຍການຂໍເຂົ້າເປືອກດິບ

**ເຣື້ອງພິກຂຸຕີຫລາຍຮູບ**

[໗໒໐] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຮາມຂອງອນາຖບິຕ ພິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ໃນຣະດູເກັບກ່ຽວ ພວກພິກຂຸຕີອອກປາກຂໍເຂົ້າເປືອກດິບ ນຳໄປໃນເມືອງ ພໍເຖິງປະຕູເມືອງ ພວກຄົນເຝົ້າປະຕູກັກຕົວໄວ້ໂດຍກ່າວວ່າ “ແມ່ເຈົ້າ ທ່ານທັງຫລາຍໂປຣດໃຫ້ສ່ວນແບ່ງແດ່” ແລ້ວປ່ອຍໄປ ຄັນກັບເຖິງສຳນັກໄດ້ບອກເຣື້ອງນັ້ນໃຫ້ພິກຂຸຕີທັງຫລາຍຊາບ ບັນດາພິກຂຸຕີຜູ້ມັກນ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດພິກຂຸຕີຈຶ່ງອອກປາກຂໍເຂົ້າເປືອກດິບລະ” ຄັນແລ້ວ ພິກຂຸຕີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

## ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະກາຄຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ພວກກິກຂຸຕີອອກປາກຂໍເຂົ້າເປືອກດິບແມ່ນແທ້ບໍ" ກິກຂຸທັງຫລາຍທູລຣັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ກິກຂຸທັງຫລາຍ ຈັ່ງໃດພວກກິກຂຸຕີຈື່ງອອກປາກຂໍເຂົ້າເປືອກດິບ ກິກຂຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈື່ງຣັບສັ່ງໃຫ້ກິກຂຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໔໑] ກໍກິກຂຸຕີໃດອອກປາກຂໍຫລືໃຊ້ໃຫ້ອອກປາກຂໍ ຂົ້ວຫລືໃຊ້ໃຫ້ຂົ້ວຕຳຫລືໃຊ້ໃຫ້ຕຳຫຸງຫລືໃຊ້ໃຫ້ຫຸງເຂົ້າເປືອກດິບແລ້ວຈັນ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງກິກຂຸຕີຫລາຍຣູບ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໗ ອນາປັຕຕິວາຣ

## ສິກຂາບົທວິກັງຄ໌

[໗໔໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ
ຄຳວ່າ ກິກຂຸຕີ ມີອະທິບາຍວ່າ ຊື່ວ່າກິກຂຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກຂຸຕີ ໃນຄວາມໝາຍນີ້
ທີ່ຊື່ວ່າ ເຂົ້າເປືອກດິບ ໄດ້ແກ່ ເຂົ້າສາລີ ເຂົ້າເຈົ້າ ເຂົ້າຫານງວ ເຂົ້າລະມານ ເຂົ້າຟ່າງ ໝາກເດືອຍ ຫຍ້າກັບແກ້ວ
ຄຳວ່າ ອອກປາກຂໍ ຄື ອອກປາກຂໍເອງ
ຄຳວ່າ ໃຊ້ໃຫ້ອອກປາກຂໍ ຄື ໃຊ້ຜູ້ອື່ນໃຫ້ອອກປາກຂໍ

ຄຳວ່າ ຂົ້ວ ຄື ຂົ້ວເອງ
ຄຳວ່າ ໃຊ້ໃຫ້ຂົ້ວ ຄື ໃຊ້ຜູ້ອື່ນໃຫ້ຂົ້ວ
ຄຳວ່າ ຕຳ ຄື ຕຳເອງ
ຄຳວ່າ ໃຊ້ໃຫ້ຕຳ ຄື ໃຊ້ຜູ້ອື່ນໃຫ້ຕຳ
ຄຳວ່າ ຫຸງ ຄື ຫຸງເອງ
ຄຳວ່າ ໃຊ້ໃຫ້ຫຸງ ຄື ໃຊ້ຜູ້ອື່ນໃຫ້ຫຸງ
ພິກຂຸນີຮັບປະເຄນ ດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັຕິທຸກກຸດ ສັນ ຕ້ອງອາບັຕິ ປາຈິຕຕິຍ໌ທຸກໆຄຳກືນ

**ອນາປັດຕິວາຣ**
ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

**ໝາຍເຫດ :**
໑ ຮຽກວ່າ "ບຸພພັຕຊາຕິ" (ວິ. ອ. ໑/໑໐໔/໓໖໘, ສາຣຕ຺ຖ. ຎີກາ ໒/໑໐໔/໑໗໖)

[໗໒໓] ໑. ພິກຂຸນີອອກປາກຂໍເຂົ້າມາສັນເພາະເຫດຸຜົລຄືອາພາສ
໒. ພິກຂຸນີອອກປາກຂໍອປຣັຕຊາຕິ໑
໓. ພິກຂຸນີວິກົລຈິຕ
໔. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໗ ຈົບ

**ໝາຍເຫດ :**
໑ ອປຣັຕຊາຕິ ໄດ້ແກ່ ຖົ່ວຂຽວ ຖົ່ວຣາຊມາສ ງາ ພືຊຜັກທີ່ກິນຫລັງອາຫາຣ (ວິ. ອ. ໑/໑໐໔/໓໖໘, ສາຣຕ຺ຖ. ຎີກາ ໒/໑໐໔/໑໗໖)

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໗ ນິທານວັຕຖຸ ໑. ລສຸຕວັຄ

**ສິກຂາບົທທີ ໗**

ວ່າດ້ວຍການຖິ້ມອຸຈຈາຣະເປັນຕົ້ນພາຍນອກຝາ

### ເຣື້ອງພຣາມຕ໌ຄົນນຶ່ງ

[໗໔໔] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທສເຈົ້າປະທັບຢູ່ ຕະ ພຣະເຊຕວັນ ອາຣາມຂອງອນາຖບິຕ ຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພຣາມຕ໌ຄົນນຶ່ງໄດ້ຮັບແຕ່ງຕັ້ງໃຫ້ເປັນຜູ້ເກັບສ່ວຍສິ່ງຫລວງ ໑ ຄິດວ່າ "ເຮົາຈັກທູລຂໍຕຳແຫນ່ງນາຍດ່ານນັ້ນ"໔ ຈຶ່ງສນານກະມ່ອມແລ້ວຍ່າງໄປຣາຊສຳນັກຜ່ານ ທີ່ຢູ່ກິກສຸຕີ ກິກສຸຕີຮູບນຶ່ງຖ່າຍອຸຈຈາຣະລົງໃນຫມໍ້ ແລ້ວເທຖິ້ມພາຍນອກຝາ ຣາດລົງເທິງສີສະ ຂອງພຣາມຕ໌ນັ້ນພໍດີ ພຣາມຕ໌ນັ້ນຕຳຫນິ ປະນາມ ໂພນທະນາວ່າ "ຍິງຊົ່ວທົວໂລ້ນພວກນີ້ບໍ່ແມ່ນ ສມຕະຍິງ ຈັ່ງໃດຈຶ່ງເທຫມໍ້ຄູຖ ລົງທີ່ສີສະຂອງເຮົາ ເຮົາຈັກເຜົາສຳນັກພວກນາງ" ຖືຄົບຄອນເຂົ້າ ໄປສຳນັກກິກສຸຕີ ອຸບາສິກຄົນນຶ່ງກຳລັງອອກຈາກສຳນັກກິກສຸຕີ ໄດ້ເຫັນພຣາມຕ໌ນັ້ນຖືຄົບຄອນ ຍ່າງເຂົ້າໄປສູ່ສຳນັກ ຈຶ່ງໄດ້ກ່າວກັບພຣາມຕ໌ນັ້ນດັ່ງນີ້ວ່າ "ເຫຕຸໃດທ່ານຈຶ່ງຖືຄົບຄອນໄປສຳນັກ ກິກສຸຕີລະ" ພຣາມຕ໌ນັ້ນກ່າວວ່າ "ຍິງຊົ່ວທົວໂລ້ນພວກນີ້ເທຫມໍ້ຄູຖລົງທີ່ສີສະຂອງເຮົາ ເຮົາ ຈັກເຜົາສຳນັກພວກນາງ" ອຸບາສິກກ່າວວ່າ "ກັບເຖີດ ພຣາມຕ໌ຜູ້ຈະເຣີນ ເຫຕຸການຕ໌ນີ້ຈັດວ່າເປັນ ມຸງຄຸລ ທ່ານຈະໄດ້ຊັພຍ໌ ໑,໐໐໐ ແລະຈະໄດ້ຕຳແຫນ່ງນາຍດ່ານນັ້ນ" ພຣາມຕ໌ນັ້ນສດົນກະມ່ອມ ແລ້ວໄປຣາຊສຳນັກ ໄດ້ຊັພຍ໌ ໑,໐໐໐ ແລະໄດ້ຕຳແຫນ່ງນາຍດ່ານນັ້ນ

**ໝາຍເຫດ :**

໑ ພຣາມຕ໌ຜູ້ນີ້ ເປັນຄົນທຳຫນ້າທີ່ເກັບສ່ວຍສິ່ງພຣະຣາຊາແລ້ວໄດ້ຮັບຕຳແຫນ່ງຫນ້າທີ່ຜູ້ນຶ່ງ ແລະໄດ້ຮັບຣາຍໄດ້ຈາກຕຳແຫນ່ງນັ້ນ ຕໍ່ມາຢາກໄດ້ຕຳແຫນ່ງນາຍດ່ານ ຈຶ່ງນຳສ່ວຍໄປສິ່ງ ພຣະຣາຊາເພື່ອຈະທູລຂໍຕຳແຫນ່ງນາຍດ່ານ (ວິ. ອ. ໒/໗໔໔/໔໙໓, ສາຣຕຖ. ຜີກາ ໓/໗໔໔/ ໑໕໔)

໔ ຈະສິ່ງສ່ວຍພຣະຣາຊາແລ້ວທູລຂໍຕຳແຫນ່ງນາຍດ່ານ (ວິ. ອ. ໒/໗໔໔/໔໙໓, ສາຣຕຖ. ຜີກາ. ໓/໗໔໔/໑໕໔) ໃນວຊິຣພຸທລິດີກາວ່າ ຈະໄປຂໍຄ່າບຳເຫນັຈ (ວຊິຣ. ຜີກາ ໗໔໔/໔໗໗)

ຄັ້ງນັ້ນ ອຸບາສົກນັ້ນກັບເຂົ້າໄປສຳນັກ ແຈ້ງເຣື້ອງນັ້ນແກ່ກິກຸດີທັງຫລາຍແລ້ວບໍຣິການ໑ ບັນດາກິກຸດີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ກິກຸດີທັງຫລາຍ ຈຶ່ງເທອຸຈຈາຣະ ພາຍນອກຝາລະ" ຄັນແລ້ວ ກິກຸດີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກຸທັງ ຫລາຍໃຫ້ຊາບ ພວກກິກຸຈຶ່ງໄດ້ນຳເຣື້ອງນີ້ ໄປຂາບທູລພຣະຜູ້ມີພຣະການຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະການຄຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຸ ທັງຫລາຍວ່າ "ກິກຸທັງຫລາຍ ຊາບວ່າ ພວກກິກຸດີເທອຸຈຈາຣະພາຍນອກຝາ ແມ່ນແທ້ບໍ" ກິກຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະການຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ກິກຸທັງຫລາຍ ຈັ່ງໃດພວກກິກຸດີຈຶ່ງເທອຸຈຈາຣະພາຍນອກຝາລະ ກິກຸທັງຫລາຍ ການ ກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມ ໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຸດີທັງຫລາຍຍົກສິກ ຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໘໔໕] ກໍກິກຸດີໃດເທຫລືໃຊ້ໃຫ້ເທອຸຈຈາຣະຫລືປັສສາວະ ຫຍາກເຍື່ອຫລືຂອງເປັນເດນພາຍ ນອກຝາຫລືພາຍນອກກຳແພງ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພຣາມຕ໌ຄົນນຶ່ງ ຈົບ

**ສິກຂາບົທວິກັງຄ໌**

[໘໔໖] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະການຄຕຣັສວ່າ ກໍ. . . ໃດ

**ໝາຍເຫດ :**

໑ ຄືປຣາມພວກກິກຸດີວ່າ "ຢ່າກະທຳຢ່າງນີ້ອີກ" (ວິ. ອ. ໒/໘໔໔/໔໙໓)

ຄຳວ່າ ກິກຸດີ ມີອະທິບາຍວ່າ ຊື່ວ່າກິກຸດີ ເພາະເປັນຜູ້ຂໍ ຯລຯ ນີ້ພຣະຜູ້ມີພຣະການຄຊົງປະສົງຄ໌ເອົາ ວ່າ ກິກຸດີ ໃນຄວາມໝາຍນີ້

ທີ່ຊື່ວ່າ ອຸຈຈາຣະ ພຣະຜູ້ມີພຣະກາຄຕຣັສໝາຍເຖິງຄູຖ
ທີ່ຊື່ວ່າ ປັສສາວະ ຕຣັສໝາຍເຖິງມູຕຣ
ທີ່ຊື່ວ່າ ຫຍາກເຍື່ອ ຕຣັສໝາຍເຖິງຂີ້ເຫຍື້ອມູລຝອຍ
ທີ່ຊື່ວ່າ ຂອງເປັນເດນ ຕຣັສໝາຍເຖິງອາມິສທີ່ເປັນເດນ ກະດູກເປັນເດນ ຫລືນ້ຳເປັນເດນ
ທີ່ຊື່ວ່າ ຝາ ໄດ້ແກ່ ຝາ ໓ ຊນິດ ຄື (໑) ຝາອິດ (໒) ຝາແຜ່ນສິລາ (໓) ຝາໄມ້
ທີ່ຊື່ວ່າ ກຳແພງ ໄດ້ແກ່ ກຳແພງ ໓ ຊນິດ ຄື (໑) ກຳແພງອິດ (໒) ກຳແພງສິລາ (໓) ກຳແພງໄມ້
ຄຳວ່າ ພາຍນອກຝາ ຄື ອີກດ້ານນຶ່ງຂອງຝາ
ຄຳວ່າ ພາຍນອກກຳແພງ ຄື ອີກດ້ານນຶ່ງຂອງກຳແພງ
ຄຳວ່າ ເທ ຄື ເທເອງ ຕ້ອງອາບັຕິປາຈິຕຕິຍ໌
ຄຳວ່າ ໃຊ້ໃຫ້ເທ ຄື ໃຊ້ຜູ້ອື່ນໃຫ້ເທ ຕ້ອງອາບັຕິທຸກກຎ ຜູ້ຮັບຄຳສັ່ງຄັ້ງດຽວແຕ່ເທຫລາຍຄັ້ງ ກິກษຸຕີຜູ້ສັ່ງ ຕ້ອງອາບັຕິປາຈິຕຕິຍ໌

**ອນາປັຕຕິວາຣ**

ກິກษຸຕີດັ່ງຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໒໗] ໑. ກິກษຸຕີເບິ່ງດູກ່ອນແລ້ວຈຶ່ງເທ
໒. ກິກษຸຕີເທໃນທີ່ທີ່ເຂົາບໍ່ໃຊ້ສັນຈອນ
໓. ກິກษຸຕີວິກົລຈິຕ
໔. ກິກษຸຕີຕົ້ນບັນຍັດ

ສິກຂາບົທທີ ໗ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໘ ນິທານວັຕຖຸ ໑. ລສຸຕວັຄ**

**ສິກຂາບົທທີ ໘**

ວ່າດ້ວຍການຖິ້ມອຸຈຈາຣະເປັນຕົ້ນພາຍນອກກຳແພງ

### ເລື້ອງພິກຂຸນີຫລາຍຮູບ

[໗໔໗] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທລເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິຕ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພຣາມຕ໌ຄົນນຶ່ງມີນາເຂົ້າຫານຽວແປງນຶ່ງຢູ່ຕິດກັບສຳນັກ ພິກຂຸນີ ພວກພິກຂຸນີເທອຸຈຈາຣະແດ່ ປັສສາວະແດ່ ຫຍາກເຍື່ອແດ່ ຂອງເປັນເດນແດ່ ຖິ້ມລົງ ໃນນາເຂົ້າຫານຽວ(ຂອງພຣາມຕ໌ນັ້ນ) ພຣາມຕ໌ຕຳຫນິປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸນີ ຈຶ່ງທຳນາເຂົ້າຫານຽວຂອງເຮົາໃຫ້ເສັຽຫາຍລະ" ພິກຂຸນີທັງຫລາຍໄດ້ຍິນພຣາມຕ໌ນັ້ນຕຳຫນິ ປະ ນາມ ໂພນທະນາ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພວກພິກຂຸນີເທອຸຈຈາຣະແດ່ ປັສສາວະແດ່ ຫຍາກເຍື່ອແດ່ ຂອງເປັນເດນແດ່ ລົງເທິງຂອງຂຽວ ລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸ ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພວກພິກຂຸນີເທອຸຈຈາຣະແດ່ ປັສສາວະແດ່ ຫຍາກເຍື່ອ ແດ່ ຂອງເປັນເດນແດ່ ລົງເທິງຂອງຂຽວ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະ ພຸທລເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທລເຈົ້າຊົງຕຳຫນິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພວກ ພິກຂຸນີຈຶ່ງເທອຸຈຈາຣະແດ່ ປັສສາວະແດ່ ຫຍາກເຍື່ອແດ່ ຂອງເປັນເດນແດ່ ລົງເທິງຂອງຂຽວ ພິກຂຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດ ໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຮັບສັ່ງໃຫ້ພິກຂຸນີທັງ ຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຓທ໌] ໑. ລສຸຓວັຄ ສິກຂາບົທທີ ໘ ສິກຂາບົທວິ ພັງຄ໌

### ພຣະບັນຍັດ

[໗໔໘] ກໍພິກຂຸນີໃດເທຫລືໃຊ້ໃຫ້ເທອຸຈຈາຣະຫລືປັສສາວະ ຫຍາກເຍື່ອຫລືຂອງເປັນເດນລົງ ເທິງຂອງຂຽວ ຕ້ອງອາບັຕິປາຈິຕຕີຍ໌

ເລື້ອງພິກສຸຕີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໗໓໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸຕີ ມີອະທິບາຍວ່າ ຊື່ວ່າພິກສຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກສຸຕີ ໃນຄວາມຫມາຍນີ້
ທີ່ຊື່ ອຸຈຈາຣະ ພຣະຜູ້ມີພຣະພາຄຕຣັສຫມາຍເຖິງຄູຖ
ທີ່ຊື່ວ່າ ປັສສາວະ ຕຣັສຫມາຍເຖິງມູຕຣ
ທີ່ຊື່ວ່າ ຫຍາກເຍື່ອ ຕຣັສຫມາຍເຖິງຂີ້ເຫຍື້ອມູລຝອຍ
ທີ່ຊື່ວ່າ ຂອງເປັນເດນ ຕຣັສຫມາຍເຖິງອາມິສທີ່ເປັນເດນ ກະດູກເປັນເດນ ຫລືນ້ຳເປັນເດນ
ທີ່ຊື່ວ່າ ຂອງຂຽວ ໄດ້ແກ່ ບຸພພັຕຊາຕິ ອປຣັຕຊາຕິ[໑]ທີ່ເຂົາປູກໄວ້ສຳລັບອຸປໂພຄບໍຣິໂພຄ
ຄຳວ່າ ເທ ຄື ເທເອງ ຕ້ອງອາບັຕິປາຈິຕຕີຍ໌
ຄຳວ່າ ໃຊ້ໃຫ້ເທ ຄື ໃຊ້ຜູ້ອື່ນໃຫ້ເທ ຕ້ອງອາບັຕິທຸກກຸຎ ຜູ້ຮັບຄຳສັ່ງຄັ້ງດຽວແຕ່ເທຫລາຍຄັ້ງ ພິກສຸຕີຜູ້ສັ່ງຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ບຸພພັຕຊາຕິ ອປຣັຕຊາຕິ ເບິ່ງຂໍ້ ໗໔໔-໗໔໕ ຫນ້າ ໑໔໔-໑໔໕ (ໝາຍເຫດ)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕຫ໌] ໑. ລສຸຕວັຄ ສິກຂາບົທທີ ໘ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໓໑] ຂອງຂຽວ ພິກສຸຕີສຳຄັນວ່າເປັນຂອງຂຽວ ເທຫລືໃຊ້ໃຫ້ເທ ຕ້ອງອາບັຕິປາຈິຕຕີຍ໌
ຂອງຂຽວ ພິກສຸຕີບໍ່ແນ່ໃຈ ເທຫລືໃຊ້ໃຫ້ເທ ຕ້ອງອາບັຕິປາຈິຕຕີຍ໌
ຂອງຂຽວ ພິກສຸຕີສຳຄັນວ່າບໍ່ແມ່ນຂອງຂຽວ ເທຫລືໃຊ້ໃຫ້ເທ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກຸກກະ**

ບໍ່ແມ່ນຂອງຂຽວ ພິກຂຸນີສຳຄັນວ່າເປັນຂອງຂຽວ ເທຫລືໃຊ້ໃຫ້ເທ ຕ້ອງອາບັດທຸກກະ
ບໍ່ແມ່ນຂອງຂຽວ ພິກຂຸນີບໍ່ແນ່ໃຈ ເທຫລືໃຊ້ໃຫ້ເທ ຕ້ອງອາບັດທຸກກະ
ບໍ່ແມ່ນຂອງຂຽວ ພິກຂຸນີສຳຄັນວ່າບໍ່ແມ່ນຂອງຂຽວ ເທຫລືໃຊ້ໃຫ້ເທ ບໍ່ຕ້ອງອາບັດ

**ອນາປັດຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໖໔] ໑. ພິກຂຸນີເບິ່ງດູກ່ອນແລ້ວຈຶ່ງເທ

໒. ພິກຂຸນີເທ**ເທິງ**ຄັນນາ

໓. ພິກຂຸນີບອກເຈົ້າຂອງກ່ອນແລ້ວຈຶ່ງເທ

໔. ພິກຂຸນີວິກົລຈິຕ

໕. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໙ ຈົບ

**ພຣະວິນັຍປິດົກ ພິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕທ໌] ໑. ລສຸຕວັຄ ສິກຂາບົທທີ ໑໐ ນິທານວັຕຖຸ**

**໑. ລສຸຕວັຄ**

**ສິກຂາບົທທີ ໑໐**

ວ່າດ້ວຍການດູການຂັບຮ້ອງຟ້ອນລຳ

**ເຣື້ອງພິກຂຸນີຈັພພັຄຄີຍ໌**

[໗໖໖] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທທເຈົ້າປະທັບຢູ່ ຕະ ພຣະເວຣຸວັນ ສຖານທີ່ໃຫ້ເຫຍື່ອແກ່ກະແຕ ເຂຕກຸງຣາຊຄຶຫ໌ ຄັ້ງນັ້ນ ມີງານມຫໍຣສົພ**ເທິງຍອດ**ເຂົາ ພວກພິກຂຸນີຈັພພັຄຄີຍ໌ພາກັນໄປເບິ່ງມຫໍຣສົພ**ເທິງຍອດ**ເຂົາ ພວກຊາວບ້ານຈຶ່ງຕຳໜິ ປະນາມໂພນທະນາວ່າ "ຈັ່ງໃດພວກພິກຂຸນີຈຶ່ງໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການປະສານສຽງດົນຕຣີແດ່ ເໝືອນຍິງຄຶຫັສຖ໌ຜູ້ບໍຣິໂພຄກາມລະ" ພິກຂຸນີທັງຫລາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້

ນັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດກິກບຸຕິຈັພພັຄຄີຍ໌ຈຶ່ງໄປດູການຟ້ອນລຳແດ່ ການຂັບຮ້ອງແດ່ ການປະສານສຽງດົນຕຣີແດ່ ເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄການລະ" ຄັນແລ້ວ ກິກບຸຕິເຫລົ່ານັ້ນໄດ້ນຳເອື້ອງນີ້ໄປບອກກິກບຸທັງຫລາຍໃຫ້ຊາບ ພວກກິກບຸຈຶ່ງໄດ້ນຳເອື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງฆ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ພຣະກາຄຣັບສັ່ງໃຫ້ປະຊຸມສົງฆ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກບຸທັງຫລາຍວ່າ "ກິກບຸທັງຫລາຍ ຊາບວ່າ ພວກກິກບຸຕິຈັພພັຄຄີຍ໌ໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການປະສານສຽງດົນຕຣີແດ່ ແມ່ນແທ້ບໍ" ກິກບຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳຫນິວ່າ "ຯລຯ ກິກບຸທັງຫລາຍ ຈັ່ງໃດກິກບຸຕິຈຶ່ງໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການປະສານສຽງດົນຕຣີແດ່ລະ ກິກບຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກບຸຕິທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕฑ໌] ໑. ລສຸຕວັຄ ສິກຂາບົທທີ ໑໐ ບົທກາຊນີຍ໌**

**ພຣະບັນຍັດ**

[໗໓໔] ກໍກິກບຸຕິໃດໄປເບິ່ງການຟ້ອນລຳ ການຂັບຮ້ອງ ຫລືການປະສານສຽງດົນຕຣີ ຕ້ອງອາບັຕິປາຈິຕຕີຍ໌

ເອື້ອງກິກບຸຕິຈັພພັຄຄີຍ໌ ຈົບ

**ສິກຂາບົທວິກັງຄ໌**

[໗໓໕] ຄຳວ່າ ກໍ. . . ໃດ ຄືຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ກິກບຸຕິ ມີອະທິບາຍວ່າ ຊື່ວ່າກິກບຸຕິ ເພາະວ່າເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກບຸຕິ ໃນຄວາມຫມາຍນີ້

ທີ່ຊື່ວ່າ ການຟ້ອນລຳ ໄດ້ແກ່ ການຟ້ອນລຳຢ່າງໃດຢ່າງນຶ່ງ
ທີ່ຊື່ວ່າ ການຂັບຮ້ອງ ໄດ້ແກ່ ການຂັບຮ້ອງຢ່າງໃດຢ່າງນຶ່ງ
ທີ່ຊື່ວ່າ ການປະສານສຽງດົນຕຣີ ໄດ້ແກ່ ການປະສານສຽງດົນຕຣີຢ່າງໃດຢ່າງນຶ່ງ

**ບົທພາຊນີຍ໌**

[໗໖໕] ພິກຂຸນີຍ່າງໄປເພື່ອທີ່ຈະດູ ຕ້ອງອາບັຕິທຸກກະ ຢືນຢູ່ໃນທີ່ທີ່ພໍຈະເບິ່ງເຫັນຫລືໄດ້ຍິນ ຕ້ອງອາບັຕິປາຈິຕຕີຍ໌ ພົ້ນສາຍຕາໄປແລ້ວກັບແລດູຫລືຟັງອີກ ຕ້ອງອາບັຕິປາຈິຕຕີຍ໌
ພິກຂຸນີຍ່າງໄປເພື່ອຈະດູມຫໍຣສົພແຕ່ລະຢ່າງ ຕ້ອງອາບັຕິທຸກກະ ຢືນເບິ່ງຢູ່ໃນທີ່ທີ່ພໍຈະເບິ່ງເຫັນຫລືໄດ້ຍິນ ຕ້ອງອາບັຕິປາຈິຕຕີຍ໌ ພົ້ນສາຍຕາໄປແລ້ວກັບແລດູຫລືຟັງອີກ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕຫ໌] ໔. ອັນຄກາຣວັຄ ສິກຂາບົທທີ ໑໐ ອນາປັຕຕິວາຣ**

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໖໗] ໑. ພິກຂຸນີຢືນໃນອາຣາມ ເຫັນຫລືໄດ້ຍິນ ໑
໒. ພິກຂຸນີຢືນ ນັ່ງຫລືນອນຢູ່ ເຂົາຟ້ອນລຳ ຂັບຮ້ອງ ຫລືປຣະໂຄມຜ່ານມາຍັງທີ່ນັ້ນໆ
໓. ພິກຂຸນີຍ່າງສວນທາງໄປເຫັນຫລືໄດ້ຍິນ
໔. ພິກຂຸນີມີທຸຣະຈຳເປັນຍ່າງຜ່ານໄປເຫັນຫລືໄດ້ຍິນ
໕. ພິກຂຸນີຜູ້ມີເຫຕຸຂັດຂ້ອງ
໖. ພິກຂຸນີວິກົລຈິຕ
໗. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໑໐ ຈົບ
ລສຸຕວັຄທີ ໑ ຈົບ

**ໝາຍເຫດ :**

໑ ຢືນຢູ່ພາຍໃນອາຣາມ ເຫັນຫລືໄດ້ຍິນກາຣຟ້ອນລຳເປັນຕົ້ນພາຍໃນອາຣາມຫລືພາຍນອກອາຣາມ (ວິ. ອ. ໔/໗໗໗/໔໙໕)

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕທ໌] ໔. ອັນທກາຣວັຄ ສິກຂາບົທທີ ໑ ນິທານວັຕຖຸ

### ໔. ອັນທກາຣວັຄ

ຫມວດວ່າດ້ວຍຄວາມມືດ

### ສິກຂາບົທທີ ໑

ວ່າດ້ວຍກາຣສົນທນາກັບຊາຍໃນທີ່ມືດ

### ເຣື້ອງກິກຂຸນີອັນເຕວາສີນີຂອງພຣະກັທທກາປິລານີ

[໗໓໗] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທທເຈົ້າປະທັບຢູ່ ທະ ພຣະເຊຕວັນ ອາຣາມຂອງອນາຖບິທທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ຊາຍຜູ້ເປັນຍາຕຂອງກິກຂຸນີຜູ້ເປັນອັນເຕວາສີນີຂອງພຣະກັທທກາປິລານີຍ່າງທາງຈາກຫມູ່ບ້ານໄປກຸງສາວັຕຖີດ້ວຍທຸຣະບາງຢ່າງ ຄັ້ງນັ້ນ ກິກຂຸນີນັ້ນຢືນຄຽງຄູ່ກັນແດ່ ສົນທນາກັນແດ່໑ສອງຕໍ່ສອງກັບຊາຍນັ້ນໃນເວລາຄ່ຳຄືນ ບໍ່ມີປະທີປ໔ ບັນດາກິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດກິກຂຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີປລະ" ຄັນແລ້ວ ກິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

### ຊົງປະຊຸມສົງໜ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະກາຄຣັບສັ່ງໃຫ້ປະຊຸມສົງໜ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ກິກຂຸນີຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີປ ແມ່ນແທ້ບໍ" ກິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທທເຈົ້າ

ຂ້າ" ພຣະຜູ້ມີພຣະພາຄພຸທລເຈົ້າຊົງຕຳຫນິວ່າ"ຯລຯ ກິກບຸຫັງຫລາຍ ຈັ່ງໃດກິກບຸຕີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງ

**ໝາຍເຫດ :**

໑ ຫມາຍເຖິງສົນທນາກັນໃນເລື່ອງກ່ຽວກັບການຄອງເຮືອນ (ວິ. ອ. ໒/ກ຺໑໙/໔໙໕)
໒ ຄຳວ່າ "ບໍ່ມີປະທີປ" ຫມາຍເຖິງບໍ່ມີແສງສວ່າງຢ່າງໃດຢ່າງນຶ່ງ ໃນບັນດາແສງຕະກຽງ ແສງຈັນທຣ໌ ແສງອາທິຕຍ໌ ແລະແສງໄຟ (ວິ. ອ. ໒/ກ຺໑໙/໔໙໕)

ກັບຊາຍ ໃນເວລາຄ່ຳຄືນບໍ່ມີປະທີປລະ ກິກບຸຫັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກບຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[ກ຺໑໙] ກໍກິກບຸຕີໃດຢືນຄຽງຄູ່ກັນຫລືສົນທນາກັນສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີປ ຕ້ອງອາບັຕິປາຈິຕຕີຍ໌

ເລື່ອງກິກບຸຕີອັນເຕວາສີນີຂອງພຣະກັທທກາປີລານີ ຈົບ

**ສິກຂາບົທວິກັງຄ໌**

[ກ຺໔໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ
ຄຳວ່າ ກິກບຸຕີ ມີອະທິບາຍວ່າ ຊື່ວ່າກິກບຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ກິກບຸຕີ ໃນຄວາມຫມາຍນີ້
ຄຳວ່າ ໃນເວລາຄ່ຳຄືນ ໄດ້ແກ່ ເມື່ອດວງອາທິຕຍ໌ຕກແລ້ວ
ຄຳວ່າ ບໍ່ມີປະທີປ ຄື ບໍ່ມີແສງສວ່າງ
ທີ່ຊື່ວ່າ ຊາຍ ໄດ້ແກ່ ມນຸຫຍ໌ຜູ້ຊາຍ ບໍ່ແມ່ນຍັກຫ໌ ບໍ່ແມ່ນເປຕ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນມນຸຫຍ໌ຜູ້ຊາຍທີ່ຮູ້ດຽງສາ ສາມາດຢືນຄຽງຄູ່ກັນ ສົນທນາກັນໄດ້
ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ
ຄຳວ່າ ສອງຕໍ່ສອງ ຄື ຊາຍ ແລະກິກບຸຕີ

ຄໍາວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌
ຄໍາວ່າ ຫລືສົນທນາກັນ ຄື ຢືນເຈຣຈາຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕໜ໌] ໔. ອັນຄກາຣວັຄ ສິກຂາບົທທີ ໑ ອນາປັຕຕິວາຣ**

ຢືນຄຽງຄູ່ກັນ ຫລືສົນທນາກັນພົ້ນຣະຍະຊ່ວງແຂນ ຕ້ອງອາບັຕິທຸກກຎ
ຢືນຄຽງຄູ່ກັນ ຫລືສົນທນາກັນກັບຍັກສ໌ ເປຣດ ກະເທີຍຫລືສັຕວ໌ເດັຽຣະສານຕົວຜູ້ ທີ່ມີຮ່າງຄ້າຍມນຸຊຍ໌ ຕ້ອງອາບັຕິທຸກກຎ

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໔໑] ໑. ພິກຂຸນີມີສຕຣີຄົນໃດຄົນນຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ
໒. ພິກຂຸນີຜູ້ບໍ່ປະສົງຄ໌ຈະຢູ່ໃນທີ່ລັບ ຢືນຄຽງຄູ່ກັນຫລືສົນທນາກັນ
໓. ພິກຂຸນີທີ່ຢືນຄຽງຄູ່ກັນ ຫລືສົນທນາກັນແຕ່ຄິດໃນເຣື້ອງອື່ນ
໔. ພິກຂຸນີວິກົລຈິຕ
໕. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕໜ໌] ໔. ອັນຄກາຣວັຄ ສິກຂາບົທທີ ໒ ນິທານວັຕຖຸ**

**໔. ອັນຄກາຣວັຄ**

**ສິກຂາບົທທີ ໒**

ວ່າດ້ວຍການຢືນກັບຊາຍໃນທີ່ກໍາບັງ

**ເຣື້ອງພິກຂຸນີອັນເຕວາສີນີຂອງພຣະພັທທກາປີລານີ**

[໗໔໔] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທຘເຈົ້າປະທັບຢູ່ ທ່ະ ພຣະເຊຕວັນ ອາຣາມຂອງອນາຖບິດ ທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ຊາຍຜູ້ເປັນຍາດຂອງພິກຂຸນີຜູ້ເປັນອັນເຕວາສີນີຂອງພຣະ ພັທທກາປີລານີຍ່າງທາງຈາກຫມູ່ບ້ານໄປກຸງສາວັດຖີດ້ວຍທຸຣະບາງຢ່າງ ລຳດັບນັ້ນ ພິກຂຸນີນັ້ນຄິດ ວ່າ "ພຣະຜູ້ມີພຣະພາຄຊົງຫ້າມຢືນຄຽງຄູ່ກັນ ສົນທນາກັນສອງຕໍ່ສອງກັບຊາຍໃນເວລາຄ່ຳມືດ ບໍ່ມີ ປະທີປ" ຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ໃນໂອກາສທີ່ກຳບັງ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກຂຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ ສອງກັບຊາຍໃນໂອກາສທີ່ກຳບັງລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງ ຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸ ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບ ຊາຍໃນໂອກາສທີ່ກຳບັງ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທຘເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທຘເຈົ້າຊົງຕຳຫນິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີຈຶ່ງຢືນຄຽງຄູ່ກັນ ແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນໂອກາສທີ່ກຳບັງລະ ພິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງ ດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕທ໌] ໔. ອັນທກາຣວັຄ ສິກຂາບົທທີ ໔ ສິກຂາບົທວິພັງຄ໌**

**ພຣະບັນຍັດ**

[໗໔໕] ກໍພິກຂຸນີໃດຢືນຄຽງຄູ່ກັນ ຫລືສົນທນາກັນສອງຕໍ່ສອງກັບຊາຍໃນໂອກາສທີ່ກຳບັງ ຕ້ອງ ອາບັຕິປາຈິຕຕິຍ໌

ເຣື້ອງພິກຂຸນີອັນເຕວາສີນີຂອງພຣະພັທທກາປີລານີ ຈົບ

**ສິກຂາບົທວິກັງຄ໌**

[໗໔໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ກິກບຸນີ ມີອະທິບາຍວ່າ ຊື່ວ່າກິກບຸນີ ເພາະວ່າເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກບຸນີ ໃນຄວາມໝາຍນີ້

ໂອກາສຊື່ວ່າ ທີ່ກຳບັງ ໄດ້ແກ່ ທີ່ກຳບັງດ້ວຍຝາ ບານປະຕູ ເສື່ອລຳແພນ ມ່ານຕົ້ນໄມ້ ເສົາ ຫລືພ້ອມ໑ ຢ່າງໃດຢ່າງນຶ່ງ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນມນຸສຍ໌ຜູ້ຊາຍທີ່ຮູ້ດຽງສາ ສາມາດຈະຢືນຄຽງຄູ່ສົນທນາກັນໄດ້

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ຄື ຊາຍ ແລະກິກບຸນີ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ຫລືສົນທນາກັນ ຄື ສົນທນາຢູ່ໃນຣະຍະຊ່ວງແຂນຜູ້ຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຢືນຄຽງຄູ່ກັນ ຫລືສົນທນາກັນພົ້ນຣະຍະຊ່ວງແຂນ ຕ້ອງອາບັຕິທຸກກຸດ

ຢືນຄຽງຄູ່ກັນ ຫລືສົນທນາກັນກັບຍັກສ໌ ເຜດ ກະເທີຍ ຫລືສັຕວ໌ເດັຽຣະສານຕົວຜູ້ທີ່ມີຮ່າງຄ້າຍມນຸສຍ໌ ຕ້ອງອາບັຕິທຸກກຸດ

ໝາຍເຫດ :

໑ "ພ້ອມ" ຄືກາຊນະສານຂນາດໃຫຍ່ສຳລັບບັນຈຸເຂົ້າເປືອກ ບາງທີຮຽກວ່າ ກຣະພ້ອມ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຓฑ໌] ໔. ອັນຄກາຣວັຄ ສິກຂາບົທທີ ໔ ອນາປັຕຕິວາຣ**

**ອນາປັຕຕິວາຣ**

ກິກບຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໔໕] ໑. ກິກບຸນີມີສຕຣີຄົນໃດຄົນນຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໔. ກິກບຸນີຜູ້ບໍ່ປະສົງຄ໌ທີ່ຈະຢູ່ໃນທີ່ລັບ ຢືນຄຽງຄູ່ກັນ ຫລືສົນທນາກັນ

໓. ກິກບຸນີທີ່ຢືນຄຽງຄູ່ກັນ ຫລືສົນທນາກັນແຕ່ຄິດໃນເຣື່ອງອື່ນ

໔. ກິກຂຸຕີວິກົລຈິຕ
໕. ກິກຂຸຕີຕົ້ນບັນຍັດ

ສິກຂາບົທທີ ໔ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕທ໌] ໔. ອັນຣກາຣວັຄ ສິກຂາບົທທີ ໓ ນິທານວັຕຖຸ

## ໔. ອັນຣກາຣວັຄ

### ສິກຂາບົທທີ ໓

ວ່າດ້ວຍການສົນທນາກັບຊາຍໃນທີ່ແຈ້ງ

ເຣື້ອງກິກຂຸຕີອັນເຕວາສີນີຂອງພຣະກັທທກາປິລານີ
[໗໔໘] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທສເຈົ້າປະທັບຢູ່ ຕະ ພຣະເຊຕວັນ ອາຮາມຂອງອນາຖບິຕ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ຊາຍຜູ້ເປັນຍາຕຂອງກິກຂຸຕີຜູ້ເປັນອັນເຕວາສີນີຂອງພຣະກັທທກາປິລານີຍ່າງທາງຈາກຫມູ່ບ້ານໄປກຸງສາວັຕຖີດ້ວຍລຸຣະບາງຢ່າງລຳດັບນັ້ນ ກິກຂຸຕີນັ້ນຄິດວ່າ "ພຣະຜູ້ມີພຣະກາຄຊົງຫ້າມຢືນຄຽງຄູ່ກັນ ສົນທນາກັນສອງຕໍ່ສອງກັບຊາຍໃນໂອກາສທີ່ກຳບັງ" ຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງ ກິກຂຸຕີຜູ້ມັກນ້ອຍ ຯລຯ ຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດນາງກິກຂຸຕີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງລະ" ຄັນແລ້ວ ກິກຂຸຕີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫດຸ ຊົງສອບຖາມກິກຂຸທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ກິກຂຸຕີຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງ ແມ່ນແທ້ບໍ" ກິກຂຸທັງຫລາຍທູລຮັບວ່າ "ຈິງພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳຫນິວ່າ "ຯລຯ ກິກຂຸທັງຫລາຍຈັ່ງໃດກິກຂຸຕີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງລະ ກິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່

ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕຫ໌] ໔. ອັນຄກາຣວັຄ ສິກຂາບົທທີ ໓ ສິກຂາບົທວິພັງຄ໌**

**ພຣະບັນຍັດ**

[໗໔໗] ກໍພິກຂຸນີໃດຢືນຄຽງຄູ່ກັນຫລືສົນທນາກັນສອງຕໍ່ສອງກັບຊາຍໃນທີ່ແຈ້ງ ຕ້ອງອາບັຕິປາຈິຕຕິຍ໌

ເຣື້ອງພິກຂຸນີອັນເຕວາສີນີຂອງພຣະທັທທກາປິລານີ ຈົບ

**ສິກຂາບົທວິພັງຄ໌**

[໗໔໘] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ
ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ທີ່ແຈ້ງ ໄດ້ແກ່ ສຖານທີ່ບໍ່ໄດ້ກໍາບັງດ້ວຍຝາ ບານປະຕູ ເສື່ອລໍາແພນ ມ່ານຕົ້ນໄມ້ ເສົາ ຫລືພ້ອມຢ່າງໃດຢ່າງນຶ່ງ
ທີ່ຊື່ວ່າ ຊາຍ ໄດ້ແກ່ ມນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນມນຸສຍ໌ຜູ້ຊາຍທີ່ຮູ້ດຽງສາ ສາມາດຢືນຄຽງຄູ່ສົນທນາກັນໄດ້
ຄໍາວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ
ຄໍາວ່າ ສອງຕໍ່ສອງ ຄື ຊາຍ ແລະພິກຂຸນີ
ຄໍາວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕິຍ໌
ຄໍາວ່າ ຫລືສົນທນາກັນ ຄື ສົນທນາຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕິຍ໌
ຢືນຄຽງຄູ່ກັນ ຫລືສົນທນາກັນພົ້ນຣະຍະຊ່ວງແຂນ ຕ້ອງອາບັຕິທຸກກຏ
ຢືນຄຽງຄູ່ກັນ ຫລືສົນທນາກັນກັບຍັກສ໌ ເຜດ ກະເທີຍ ຫລືສັຕວ໌ເດັຽຣະສານຕົວຜູ້ທີ່ມີຮ່າງຄ້າຍມ

ນຸຫຍ໌ ຕ້ອງອາບັຕິທຸກກຸຍ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕທ໌] ໔. ອັນທກາຣວັຄ ສິກຂາບົທທີ ໓ ອນາປັຕຕິວາຣ

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໔໙] ໑. ພິກຂຸນີມີສຕຣີຄົນໃດຄົນນຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໒. ພິກຂຸນີຜູ້ບໍ່ປະສົງຄ໌ທີ່ຈະຢູ່ໃນທີ່ລັບ ຢືນຄຽງຄູ່ກັນ ຫລືສົນທນາກັນ

໓. ພິກຂຸນີທີ່ຢືນຄຽງຄູ່ກັນ ຫລືສົນທນາກັນແຕ່ຄິດໃນເຣື້ອງອື່ນ

໔. ພິກຂຸນີວິກົລຈິຕ

໕. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໓ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕທ໌] ໔. ອັນທກາຣວັຄ ສິກຂາບົທທີ ໔ ນິທານວັຕຖຸ

**໔. ອັນທກາຣວັຄ**

**ສິກຂາບົທທີ ໔**

ວ່າດ້ວຍການສັ່ງເພື່ອນພິກຂຸນີກັບ

**ເຣື້ອງພິກຂຸນີຖຸລລນັນທາ**

[໗໕໐] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທທເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິຕ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີຖຸລລນັນທາຢືນຄຽງຄູ່ກັນແດ່ ສົນທນາກັນແດ່ ເວົ້າ ກຣະຊິບຂ້າງຫູແດ່ສອງຕໍ່ສອງກັບຊາຍໃນຖນົນແດ່ ທາງຮ່ອມຕັນແດ່ ທາງສາມແຍກແດ່ ສັ່ງ

ກິກຂຸນີຜູ້ເປັນເພື່ອນກັບໄປກ່ອນແດ່ ບັນດາກິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດກິກຂຸນີຖຸລລນັນທາຢືນຄຽງຄູ່ກັນແດ່ ສົນທນາກັນແດ່ ເວົ້າຊິ່ມຂ້າງຫູແດ່ ສອງຕໍ່ ສອງກັບຊາຍໃນຖນົນແດ່ ຮ່ອມຕັນແດ່ ທາງສາມແຍກແດ່ ສົ່ງກິກຂຸນີຜູ້ເປັນເພື່ອນກັບໄປ ກ່ອນແດ່ລະ" ຄັນແລ້ວ ກິກຂຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພອກ ກິກຂຸຈຶ່ງໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

## ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລໍາດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸ ທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ກິກຂຸນີຖຸລລນັນທາຢືນຄຽງຄູ່ກັນແດ່ ສົນທນາກັນແດ່ ເວົ້າຊິ່ມຂ້າງຫູແດ່ສອງຕໍ່ສອງກັບຊາຍໃນຖນົນແດ່ ທາງຮ່ອມຕັນແດ່ ທາງສາມແຍກແດ່ ສົ່ງກິກຂຸ ນີ ຜູ້ເປັນເພື່ອນກັບໄປກ່ອນແດ່ ແມ່ນແທ້ບໍ" ກິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທຣເຈົ້າ ຂ້າ" ພຣະຜູ້ມີພຣະກາຄພຸທຣເຈົ້າຊົງຕໍາຫນິວ່າ"ຯລຯ ກິກຂຸທັງຫລາຍ ຈັ່ງໃດກິກຂຸນີຖຸລລນັນທາຢື ນຄຽງຄູ່ກັນແດ່ ສົນທນາກັນແດ່ ເວົ້າຊິ່ມຂ້າງຫູແດ່ ສອງຕໍ່ສອງກັບຊາຍໃນຖນົນແດ່ ທາງຮ່ອມ ຕັນແດ່ ທາງສາມແຍກແດ່ ສົ່ງກິກຂຸນີຜູ້ເປັນເພື່ອນກັບໄປກ່ອນແດ່ລະ ກິກຂຸທັງຫລາຍ ກາຣ ກະທໍາຢ່າງນີ້ ບໍ່ໄດ້ທໍາຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຂຸນີທັງຫລາຍຍົກສິກຂາບົທນີ້ ຂຶ້ນສະແດງດັ່ງນີ້

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຑ໌] ໔. ອັນຣກາຣວັຄ ສິກຂາບົທທີ ໔ ສິກຂາບົທວິກັງຄ໌

## ພຣະບັນຍັດ

[໗໕໑] ກໍກິກຂຸນີໃດຢືນຄຽງຄູ່ກັນ ຫລືສົນທນາກັນ ຫລືເວົ້າຊິ່ມຂ້າງຫູແດ່ ສອງຕໍ່ສອງກັບຊາຍ ໃນຖນົນແດ່ ທາງຮ່ອມຕັນແດ່ ທາງສາມແຍກແດ່ ຫລືສົ່ງກິກຂຸນີຜູ້ເປັນເພື່ອນກັບໄປ ຕ້ອງອາບັຕິ ປາຈິຕຕີຍ໌

ເຣື້ອງກິກຂຸນີຖຸລລນັນທາ ຈົບ

**ສິກຂາບົທວິກັງຄ໌**

[໗໕໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ກິກຂຸນີ ມີອະທິບາຍວ່າ ຊື່ວ່າກິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ກິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຖນົນ ໄດ້ແກ່ ພຣະຜູ້ມີພຣະພາຄຕຣັສໝາຍເຖິງທາງຍ່າງ

ທີ່ຊື່ວ່າ ທາງຮ່ອມຕັນ ໄດ້ແກ່ ຄົນເຂົ້າໄປທາງໃດຕ້ອງຍ່າງອອກທາງນັ້ນ

ທີ່ຊື່ວ່າ ທາງສາມແຍກ ໄດ້ແກ່ ພຣະຜູ້ມີພຣະພາຄຕຣັສໝາຍເຖິງທາງແຍກ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມນຸດຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນມນຸດຜູ້ຊາຍທີ່ຮູ້ດຽງສາ ສາມາດຢືນຮ່ອມກັນ ສົນທນາກັນໄດ້

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ຄື ຊາຍ ແລະກິກຂຸນີ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ຫລືສົນທນາກັນ ຄື ສົນທນາກັນຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ຫລືເວົ້າກຣະຊິບຂ້າງຫູ ຄື ບອກເນື້ອຄວາມໃກ້ຫູຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ຫລືສົ່ງກິກຂຸນີຜູ້ເປັນເພື່ອນກັບໄປ ຄື ປະສົງຄ໌ຈະປະພຶດບໍ່ສົມຄວຣ ຈຶ່ງສົ່ງກິກຂຸນີຜູ້ເປັນເພື່ອນກັບໄປ ຕ້ອງອາບັຕິປາຈິຕຕີຍ໌ ເມື່ອກິກຂຸນີຜູ້ເປັນເພື່ອນພົ້ນຣະຍະທີ່ຈະເບິ່ງເຫັນ ຫລືຣະຍະທີ່ຈະໄດ້ຍິນ ຕ້ອງອາບັຕິທຸກກຏ ເມື່ອກິກຂຸນີຜູ້ເປັນເພື່ອນພົ້ນໄປແລ້ວ ຕ້ອງອາບັຕິປາຈິຕຕີຍ໌

ຢືນຄຽງຄູ່ກັນ ຫລືສົນທນາກັນກັບຊາຍພົ້ນຣະຍະຊ່ວງແຂນ ຕ້ອງອາບັຕິທຸກກຏ

ຢືນຄຽງຄູ່ກັນ ຫລືສົນທນາກັນກັບຍັກສ໌ ເຜດ ກະເທີຍ ຫລືສັຕວ໌ເດັຽຣະສານຕົວຜູ້ທີ່ມີຮ່າງຄ້າຍມນຸດ ຕ້ອງອາບັຕິທຸກກຏ

**ອນາປັຕຕິວາຣ**

ກິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໕໕] ໑. ກິກຂຸນີມີສຕຣີຄົນໃດຄົນນຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໒. ກິກຂຸນີຜູ້ບໍ່ປະສົງຄ໌ທີ່ຈະຢູ່ໃນທີ່ລັບຢືນຄຽງຄູ່ກັນຫລືສົນທນາກັນ

໓. ກິກຂຸນີທີ່ຢືນຄຽງຄູ່ກັນຫລືສົນທນາກັນແຕ່ຄິດໃນເຣື່ອງອື່ນ

໔. ກິກຂຸນີສົ່ງເພື່ອນກິກຂຸນີກັບເມື່ອມີເຫຕຸຈຳເປັນ

໕. ພິກສຸນີວິກົລຈິດ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົທທີ ໔ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕຫ໌] ໑. ອັນຄກາຣວັຄ ສິກຂາບົທທີ ໕ ນິທານວັຕຖຸ

## ໑. ອັນຄກາຣວັຄ

**ສິກຂາບົທທີ ໕**

ວ່າດ້ວຍການຈາກໄປໂດຍບໍ່ບອກເຈົ້າຂອງ

## ເຣື້ອງພິກສຸນີຮູບນຶ່ງ

[໗໕໔] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທສເຈົ້າປະທັບຢູ່ ດາພຣະເຊຕວັນ ອາຣາມຂອງອນາຖບິຕຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຮູບນຶ່ງເປັນພິກສຸນີປະຈຳຕະກູນນຶ່ງ ຮັບກັຕຕາຫາຣປະຈຳ ຄັນເວລາເຊົ້າ ພິກສຸນີນັ້ນຄອງອັນຕຣວາສກ ຖືບາຕຣແລະຈີວອນ໑ເຂົ້າໄປເຖິງທີ່ຕະກູນນັ້ນ ຄັນເຖິງແລ້ວ ນັ່ງເທິງອາສນະ ແລ້ວຈາກໄປໂດຍບໍ່ບອກເຈົ້າຂອງບ້ານ ຍິງຮັບໃຊ້ຕະກູນນັ້ນກວາດເຮືອນໄດ້ເກັບອາສນະນັ້ນໄວ້ຣະຫວ່າງກາຊນະ ຄົນໃນບ້ານບໍ່ເຫັນອາສນະ ໄດ້ໄປຖາມພິກສຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ອາສນະຢູ່ທີ່ໃດ" ພິກສຸນີນັ້ນກ່າວວ່າ "ທ່ານທັງຫລາຍ ຂະນ້ອຍກໍບໍ່ເຫັນອາສນະນັ້ນ" ຄົນເຫລົ່ານັ້ນເວົ້າວ່າ "ແມ່ເຈົ້າ ໂປຣດໃຫ້ອາສນະນັ້ນເຖີດ" ບໍຣິກາຫແລ້ວເຊົາຖວາຍກັຕຕາຫາຣປະຈຳ ຕໍ່ມາຄົນເຫລົ່ານັ້ນທຳຄວາມສະອາດບ້ານຫລັງນັ້ນ ພົບອາສນະລີ້ຢູ່ຣະຫວ່າງກາຊນະຈຶ່ງຂໍຂມາພິກສຸນີນັ້ນ ແລ້ວໄດ້ເລີ້ມ(ຖວາຍ)ກັຕຕາຫາຣປະຈຳ ຄັ້ງນັ້ນ ພິກສຸນີນັ້ນບອກເຣື້ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງເຂົ້າໄປສູ່ຕະກູນໃນເວລາກ່ອນຈັນກັຕຕາຫາຣ ນັ່ງເທິງອາສນະແລ້ວຈາກໄປໂດຍບໍ່ບອກເຈົ້າຂອງ(ບ້ານ)ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາຄຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸຕີເຂົ້າສູ່ຕະກູນໃນເວລາ

**ໝາຍເຫດ :**

໑ ຄວງອັນຕຣອາສກຖີບາຕຣຈີວອນ ດູ ວິນັຍປິດົກແປລ ເຫລັ້ມ ໑ ຂໍ້ ໔໔ ໜ້າ ໑໔ (ໝາຍເຫດ)

ກ່ອນຈັນກັຕຕາຫາຣ ນັ່ງເຫິງອາສນະແລ້ວຈາກໄປໂດຍບໍ່ບອກເຈົ້າຂອງບ້ານ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທລເຈົ້າຊົງຕຳໜິວ່າ"ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸຕີເຂົ້າສູ່ຕະກູນໃນເວລາກ່ອນຈັນກັຕຕາຫາຣ ນັ່ງເຫິງອາສນະແລ້ວຈາກໄປໂດຍບໍ່ບອກເຈົ້າຂອງບ້ານລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂື້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໕໕] ກໍພິກສຸຕີໃດເຂົ້າໄປສູ່ຕະກູນໃນເວລາກ່ອນຈັນກັຕຕາຫາຣ ນັ່ງເຫິງອາສນະແລ້ວຈາກໄປໂດຍບໍ່ບອກເຈົ້າຂອງບ້ານ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸຕີຮູບນຶ່ງ ຈົບ

**ສິກຂາບົທວິກັງຄ໌**

[໑໕໖] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸຕີ ມີອະທິບາຍວ່າ ຊື່ວ່າພິກສຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກສຸຕີ ໃນຄວາມໝາຍນີ້

ທີ່ຊື່ວ່າ ເວລາກ່ອນຈັນກັຕຕາຫາຣ ຄື ຕັ້ງແຕ່ເວລາອຣຸຓຂຶ້ນຈົນເຖິງທ່ຽງວັນ

ທີ່ຊື່ວ່າ ຕະກູນ ໝາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກສັຕຣິຍ໌ ຕະກູນພຣາມຓ໌ຕະກູນແພສຍ໌ ຕະກູນສູທຣ

ຄຳວ່າ ເຂົ້າໄປ ຄື ໄປໃນຕະກູນນັ້ນ
ທີ່ຊື່ວ່າ ອາສນະ ພຣະຜູ້ມີພຣະກາຄຕຣັສໝາຍເຖິງທີ່ສຳລັບນັ່ງຂັດສມາຄີ
ຄຳວ່າ ນັ່ງ ຄື ນັ່ງເທິງອາສນະນັ້ນ
ຄຳວ່າ ຈາກໄປໂດຍບໍ່ໄດ້ບອກເຈົ້າຂອງບ້ານ ຄວາມວ່າ ບໍ່ບອກຄົນໃດຄົນນຶ່ງໃນຕະກູນນັ້ນຜູ້ຮູ້ດຽງສາ ກ້າວພົ້ນຊາຍຄາ ຕ້ອງອາບັຕິປາຈິຕຕີຍ໌ ຍ່າງລ່ວງເຂຕບ້ານໃນທີ່ແຈ້ງ ຕ້ອງອາບັຕິປາຈິຕຕີຍ໌

**ບົທກາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໕໗] ຍັງບໍ່ໄດ້ບອກ ກິກຊຸຕີສຳຄັນວ່າຍັງບໍ່ໄດ້ບອກ ຈາກໄປ ຕ້ອງອາບັຕິປາຈິຕຕີຍ໌
ຍັງບໍ່ໄດ້ບອກ ກິກຊຸຕີບໍ່ແນ່ໃຈ ຈາກໄປ ຕ້ອງອາບັຕິປາຈິຕຕີຍ໌
ຍັງບໍ່ໄດ້ບອກ ກິກຊຸຕີສຳຄັນວ່າບອກແລ້ວ ຈາກໄປ ຕ້ອງອາບັຕິປາຈິຕຕີຍ໌

**ຕິກທຸກກຝ**

ທີ່ບໍ່ແມ່ນທີ່ສຳລັບນັ່ງຂັດສມາຄີ ຕ້ອງອາບັຕິທຸກກຝ
ບອກແລ້ວ ກິກຊຸຕີສຳຄັນວ່າຍັງບໍ່ໄດ້ບອກ ຕ້ອງອາບັຕິທຸກກຝ
ບອກແລ້ວ ກິກຊຸຕີບໍ່ແນ່ໃຈ ຕ້ອງອາບັຕິທຸກກຝ
ບອກແລ້ວ ກິກຊຸຕີສຳຄັນວ່າບອກແລ້ວ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ກິກຊຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໕໘] ໑. ກິກຊຸຕີໄປໂດຍບອກແລ້ວ
໒. ກິກຊຸຕີຜູ້ນັ່ງເທິງອາສນະທີ່ເຄື່ອນຍ້າຍບໍ່ໄດ້
໓. ກິກຊຸຕີຜູ້ເປັນໄຂ້
໔. ກິກຊຸຕີຜູ້ມີເຫຕຸຂັດຂ້ອງ
໕. ກິກຊຸຕີວິກົລຈິຕ
໖. ກິກຊຸຕີຕົ້ນບັນຍັດ

ສິກຂາບົທທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕຫ໌] ໔. ອັນລກາຣວັຄ ສິກຂາບົທທີ ໖ ນິທານວັຕຖຸ

## ໔. ອັນລກາຣວັຄ

**ສິກຂາບົທທີ ໖**

ວ່າດ້ວຍການນັ່ງນອນເທິງອາສນະໂດຍບໍ່ບອກເຈົ້າຂອງ

**ເຣື້ອງພິກຂຸນີຖຸລລນັນທາ**

[໑໕໙] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທຣເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິຓ ຑິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີຖຸລລນັນທາເຂົ້າໄປສູ່ຕະກູນທັງຫລາຍພາຍຫລັງຈັນ ທັຕຕາຫາຣ ນັ່ງແດ່ ນອນແດ່ເທິງອາສນະໂດຍບໍ່ບອກເຈົ້າຂອງ(ບ້ານ) ຄົນໃນບ້ານເກງໃຈພິກຂຸນີ ຖຸລລນັນທາ ຈຶ່ງບໍ່ກ້ານັ່ງຫລືນອນເທິງອາສນະ ຄົນທັງຫລາຍພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກຂຸນີຖຸລລນັນທາຈຶ່ງເຂົ້າໄປສູ່ຕະກູນພາຍຫລັງຈັນທັຕຕາຫາຣ ນັ່ງແດ່ ນອນແດ່ເທິງອາສນະ ໂດຍບໍ່ບອກເຈົ້າຂອງ(ບ້ານ)ລະ" ພິກຂຸນີທັງຫລາຍໄດ້ຍິນຄົນພວກນັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກຂຸນີຖຸລລນັນທາຈຶ່ງເຂົ້າໄປສູ່ຕະກູນພາຍຫລັງຈັນທັຕຕາຫາຣ ນັ່ງແດ່ ນອນແດ່ເທິງອາສນະໂດຍບໍ່ບອກເຈົ້າຂອງ(ບ້ານ)ລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາຄຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີຖຸລລນັນທາເຂົ້າໄປສູ່ຕະກູນພາຍຫລັງຈັນທັຕຕາຫາຣ ນັ່ງແດ່ ນອນແດ່ເທິງອາສນະໂດຍບໍ່ບອກເຈົ້າຂອງ(ບ້ານ) ຈິງຫລື" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທຣເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທຣເຈົ້າຊົງຕຳຫນິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີຖຸລລນັນທາຈຶ່ງເຂົ້າໄປສູ່ຕະກູນພາຍຫລັງຈັນທັຕຕາຫາຣ ນັ່ງແດ່ ນອນ

ແດ່ເທິງອາສນະໂດຍບໍ່ບອກເຈົ້າຂອງ(ບ້ານ)ລະ ກິກษຸທັງຫລາຍການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກษຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕໜ໌] ໔. ອັນຄກາຣວັຄ ສິກຂາບົທທີ ໘ ສິກຂາບົທວິກັງຄ໌

### ພຣະບັນຍັດ

[໗໘໐] ກໍກິກษຸນີໃດເຂົ້າໄປສູ່ຕະກູນພາຍຫລັງຈັນກັຕຕາຫານ ນັ່ງຫລືນອນເທິງອາສນະ໑ໂດຍບໍ່ບອກເຈົ້າຂອງບ້ານ ຕ້ອງອາບັດປາຈິດຕີຍ໌

ເຣື້ອງກິກษຸນີຖຸລລນັນທາ ຈົບ

### ສິກຂາບົທວິກັງຄ໌

[໗໘໑] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ
ຄຳວ່າ ກິກษຸນີ ມີອະທິບາຍວ່າ ຊື່ວ່າກິກษຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກษຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ພາຍຫລັງຈັນກັຕຕາຫານ ໄດ້ແກ່ ຕັ້ງແຕ່ເວລາທ່ຽງວັນໄປຈົນເຖິງດວງອາທິຕຍ໌ຕົກ
ທີ່ຊື່ວ່າ ຕະກູນ ຫມາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກษັຕຣິຍ໌ ຕະກູນພຣາມຕ໌ ຕະກູນແພສຍ໌ ຕະກູນສູທຣ
ຄຳວ່າ ເຂົ້າໄປ ຄື ໄປໃນຕະກູນນັ້ນ
ຄຳວ່າ ໂດຍບໍ່ບອກເຈົ້າຂອງບ້ານ ຄື ບໍ່ຂໍອະນຸຍາດເຈົ້າຂອງບ້ານຜູ້ຮັບຜິດຊອບໃນຕະກູນນັ້ນ
ທີ່ຊື່ວ່າ ອາສນະ ພຣະຜູ້ມີພຣະກາຄຕຣັສຫມາຍເຖິງທີ່ສຳລັບນັ່ງຂັດສມາທິ
ຄຳວ່າ ນັ່ງ ຄື ນັ່ງເທິງອາສນະນັ້ນ ຕ້ອງອາບັດປາຈິດຕີຍ໌
ຄຳວ່າ ຫລືນອນ ຄື ນອນເທິງອາສນະນັ້ນ ຕ້ອງອາບັດປາຈິດຕີຍ໌

**ໝາຍເຫດ :**

໑ ນັ່ງແລ້ວໄປ ຕ້ອງອາບັຕິປາຈິຕຕິຍ໌ຕົວດຽວ ບໍ່ນັ່ງແຕ່ນອນ ຕ້ອງອາບັຕິປາຈິຕຕິຍ໌ຕົວດຽວ ນັ່ງແລ້ວນອນ ຕ້ອງອາບັຕິປາຈິຕຕິຍ໌ ໒ ຕົວ (ວິ. ອ. ໒/໗໖໐/໔໙໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕຫ໌] ໒. ອັນຣກາຣວັຄ ສິກຂາບົທທີ ໖ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕິຍ໌**

[໗໖໒] ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ນັ່ງຫລືນອນເທິງອາສນະຕ້ອງອາບັຕິປາຈິຕຕິຍ໌

ຍັງບໍ່ໄດ້ບອກ ພິກຂຸນີບໍ່ແນ່ໃຈ ນັ່ງຫລືນອນເທິງອາສນະ ຕ້ອງອາບັຕິປາຈິຕຕິຍ໌

ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າບອກແລ້ວ ນັ່ງຫລືນອນເທິງອາສນະ ຕ້ອງອາບັຕິປາຈິຕຕິຍ໌

**ຕິກທຸກກົຏ**

ບໍ່ແມ່ນທີ່ສຳລັບນັ່ງຂັດສມາຣິ ຕ້ອງອາບັຕິທຸກກົຏ

ບອກແລ້ວ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ຕ້ອງອາບັຕິທຸກກົຏ

ບອກແລ້ວ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກົຏ

ບອກແລ້ວ ພິກຂຸນີສຳຄັນວ່າບອກແລ້ວ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໖໓] ໑. ພິກຂຸນີບອກແລ້ວນັ່ງຫລືນອນເທິງອາສນະ

໒. ພິກຂຸນີນັ່ງຫລືນອນເທິງອາສນະທີ່ເຂົາປູໄວ້ປະຈຳ

໓. ພິກຂຸນີຜູ້ເປັນໄຂ້

໔. ພິກຂຸນີຜູ້ມີເຫຕຸຂັດຂ້ອງ

໕. ພິກຂຸນີວິກົລຈິຕ

໖. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໓ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໔. ອັນຂກາຣວັຄ ສິກຂາບົທທີ ໆ ນິທານວັຕຖຸ

## ໔. ອັນຂກາຣວັຄ

**ສິກຂາບົທທີ ໆ**

ວ່າດ້ວຍການປູລາດໂດຍບໍ່ບອກ

### ເລື້ອງກິກຂຸນີຫລາຍຮູບ

[໗໕໔] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທຂເຈົ້າປະທັບຢູ່ ໓ະ ພຣະເຊຕວັນ ອາຮາມຂອງອນາຖບິຕ ຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກຂຸນີຫລາຍຮູບຍ່າງທາງໄປກຸງສາວັຕຖີ ແຄວ້ນໂກສົລ ເຖິງຫມູ່ບ້ານແຫ່ງນຶ່ງໃນເວລາແລງ ເຂົ້າໄປສູ່ຕະກູນພຣາມຕ໌ຕະກູນນຶ່ງຂໍໂອກາສ ລຳດັບນັ້ນ ພຣາຫມຕີໄດ້ກ່າວກັບກິກຂຸນີເຫລົ່ານັ້ນ ດັ່ງນີ້ວ່າ "ແມ່ເຈົ້າທັງຫລາຍ ໂປຣດຖ້າຈົນກວ່າພຣາມຕ໌ຈະມາ" ພວກກິກຂຸນີກ່າວວ່າ "ພວກເຮົາຈະຖ້າຈົນກວ່າພຣາມຕ໌ຈະມາ" ໄດ້ປູທີ່ນອນ ບາງພວກນັ່ງ ບາງພວກນອນ ຄັນໃນຕອນກາງຄືນ ພຣາມຕ໌ກັບມາພົບເຫັນໄດ້ກ່າວກັບພຣາຫມຕີ ດັ່ງນີ້ວ່າ "ສຕຣີເຫລົ່ານີ້ເປັນໃຜ" ພຣາຫມຕີກ່າວວ່າ "ພໍ່ເຈົ້າ ສຕຣີເຫລົ່ານີ້ເປັນກິກຂຸນີ" ພຣາມຕ໌ກ່າວວ່າ "ພວກທ່ານຈົ່ງຂັບໄລ່ຍິງຊິ່ວຫົວໂລ້ນພວກນີ້ອອກໄປ" ແລ້ວໃຫ້ຂັບໄລ່ອອກຈາກເຮືອນ ຄັນກິກຂຸນີເຫລົ່ານັ້ນໄປເຖິງກຸງສາວັຕຖີ ເລົ່າເລື້ອງນັ້ນໃຫ້ກິກຂຸນີທັງຫລາຍຊາບ ບັນດາກິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກກິກຂຸນີຈຶ່ງເຂົ້າໄປສູ່ຕະກູນໃນເວລາວິການ ປູຫລືໃຊ້ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງບ້ານແລ້ວນັ່ງແດ່ ນອນແດ່ລະ" ຄັນແລ້ວກິກຂຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ພວກກິກຂຸນີເຂົ້າໄປສູ່ຕະກູນໃນເວລາວິການ ປູຫລືໃຊ້

ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງບ້ານແລ້ວນັ່ງແດ່ ນອນແດ່ ແມ່ນແທ້ບໍ" ກິກຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທລເຈົ້າຊົງຕໍາຫນິວ່າ"ຯລຯ ກິກຸທັງຫລາຍ ຈັ່ງໃດພວກກິກຸຕີຈຶ່ງເຂົ້າໄປສູ່ຕະກູນໃນເວລາວິກາລ ປູຫລືໃຊ້ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງບ້ານແລ້ວນັ່ງແດ່ ນອນແດ່ລະ ກິກຸທັງຫລາຍ ກາຣກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໘໕໕] ກໍກິກຸຕີໃດເຂົ້າໄປສູ່ຕະກູນໃນເວລາວິກາລ ປູຫລືໃຊ້ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງບ້ານແລ້ວນັ່ງຫລືນອນ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງກິກຸຕີຫລາຍຮູບ ຈົບ

**ສິກຂາບົທວິກັງຄ໌**

[໘໕໖] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ ຄໍາວ່າ ກິກຸຕີ ມີອລິບາຍວ່າ ຊື່ວ່າກິກຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກຸຕີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ເວລາວິກາລ ຄື ຕັ້ງແຕ່ເວລາດວງອາທິຕຍ໌ຕກໄປຈົນເຖິງອຣຸຕຂຶ້ນ

ທີ່ຊື່ວ່າ ຕະກູນ ຫມາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກຊັຕຣິຍ໌ ຕະກູນພຣາມຕ໌ ຕະກູນແພສຍ໌ ຕະກູນສູທຣ

ຄໍາວ່າ ເຂົ້າໄປ ຄື ໄປໃນຕະກູນນັ້ນ

ຄໍາວ່າ ໂດຍບໍ່ບອກເຈົ້າຂອງບ້ານ ຄື ບໍ່ຂໍອນຸຍາຕເຈົ້າຂອງບ້ານຜູ້ຮັບຜິດຊອບໃນຕະກູນນັ້ນ

ທີ່ຊື່ວ່າ ທີ່ນອນ ໂດຍທີ່ສຸດແມ່ນເຄື່ອງປູລາດທີ່ເຮັດດ້ວຍໃບໄມ້

ຄໍາວ່າ ປູ ຄື ປູເອງ

ຄໍາວ່າ ໃຊ້ໃຫ້ປູ ຄື ໃຊ້ຜູ້ອື່ນໃຫ້ປູ

ຄໍາວ່າ ນັ່ງ ຄື ນັ່ງເທິງທີ່ນອນນັ້ນ ຕ້ອງອາບັຕິປາຈິຕຕີຍ໌

ຄໍາວ່າ ຫລືນອນ ຄື ນອນເທິງທີ່ນອນນັ້ນ ຕ້ອງອາບັຕິປາຈິຕຕີຍ໌

**ບົທກາຊນີຍ໌**

[໑໖໑] ຍັງບໍ່ໄດ້ບອກ ກິກຸສີສຳຄັນວ່າຍັງບໍ່ໄດ້ບອກ ປູຫລືໃຊ້ຜູ້ອື່ນໃຫ້ປູທີ່ນອນແລ້ວນັ່ງຫລືນອນ ຕ້ອງອາບັຕິປາຈິຕຕີຍ໌

ຍັງບໍ່ໄດ້ບອກ ກິກຸສີບໍ່ແນ່ໃຈ ປູຫລືໃຊ້ຜູ້ອື່ນໃຫ້ປູທີ່ນອນແລ້ວນັ່ງຫລືນອນ ຕ້ອງອາບັຕິປາຈິຕຕີຍ໌

ຍັງບໍ່ໄດ້ບອກ ກິກຸສີສຳຄັນວ່າບອກແລ້ວ ປູຫລືໃຊ້ຜູ້ອື່ນໃຫ້ປູທີ່ນອນແລ້ວນັ່ງຫລືນອນ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກຸກກະ**

ບອກແລ້ວ ກິກຸສີສຳຄັນວ່າຍັງບໍ່ໄດ້ບອກ ຕ້ອງອາບັຕິທຸກກະ

ບອກແລ້ວ ກິກຸສີບໍ່ແນ່ໃຈ ຕ້ອງອາບັຕິທຸກກະ

ບອກແລ້ວ ກິກຸສີສຳຄັນວ່າບອກແລ້ວ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ກິກຸສີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໖໑] ໑. ກິກຸສີບອກເຈົ້າຂອງ ປູເອງຫລືໃຊ້ຜູ້ອື່ນໃຫ້ປູທີ່ນອນ ນັ່ງຫລືນອນ

໒. ກິກຸສີຜູ້ເປັນໄຂ້

໓. ກິກຸສີຜູ້ມີເຫດຸຂັດຂ້ອງ

໔. ກິກຸສີວິກົລຈິຕ

໕. ກິກຸສີຕົ້ນບັນຍັດ

ສິກຂາບົທທີ ໗ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຕຫ໌] ໒. ອັນລກາຣວັຄ ສິກຂາບົທທີ ໑ ນິທານວັຕຖຸ**

**໒. ອັນລກາຣວັຄ**

**ສິກຂາບົທທີ ໗**
ວ່າດ້ວຍການໃຫ້ຜູ້ອື່ນໂພນທະນາ

**ເຣື້ອງພິກຂຸນີອັນເຕວາສີນີຂອງພຣະພັທທກາປິລານີ**

[໗໓໙] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທທເຈົ້າປະທັບຢູ່ ພະພຣະເຊຕວັນ ອາຣາມຂອງອນາຖບິນດິກ ກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີອັນເຕວາສີນີຂອງພຣະພັທທກາປິລານີອຸປັຊຖາກພຣະ ພັທທກາປິລານີໂດຍເຄົາຣົບ ພຣະພັທທກາປິລານີໄດ້ກ່າວກັບພິກຂຸນີທັງຫລາຍດັ່ງນີ້ວ່າ "ແມ່ເຈົ້າ ພິກຂຸນີນີ້ອຸປັຊຖາກເຮົາໂດຍເຄົາຣົບ ເຮົາຈະໃຫ້ຈີວອນທ່ານ" ແຕ່ພິກຂຸນີນັ້ນເພາະຄວາມເຂົ້າໃຈຜິດ ເພາະໃຄ່ຄວນຜິດ ໃຫ້ຜູ້ອື່ນໂພນທະນາວ່າ "ແມ່ເຈົ້າ ເຂົາວ່າຂະນ້ອຍບໍ່ໄດ້ອຸປັຊຖາກແມ່ເຈົ້າໂດຍ ເຄົາຣົບ ແມ່ເຈົ້າຈະບໍ່ໃຫ້ຈີວອນແກ່ຂະນ້ອຍ" ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະ ນາມ ໂພນທະນາວ່າ "ຈັ່ງໃດພິກຂຸນີຈຶ່ງໃຫ້ຜູ້ອື່ນໂພນທະນາເພາະເຂົ້າໃຈຜິດ ເພາະໃຄ່ຄວນຜິດລະ" ຄັນແລ້ວພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງ ນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸ ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີໃຫ້ຜູ້ອື່ນໂພນທະນາ ເພາະເຂົ້າໃຈຜິດ ເພາະໃຄ່ ຄວນຜິດ ແມ່ນແທ້ບໍ່ພິກຂຸທັງຫລາຍທູລຮັບວ່າ "ຈິງ ພຣະພຸທທເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທທ ເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີຈຶ່ງໃຫ້ຜູ້ອື່ນໂພນທະນາເພາະເຂົ້າໃຈຜິດ ເພາະໃຄ່ຄວນຜິດລະ ພິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງ ຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕທ໌] ໔. ອັນຄກາຣວັຄ ສິກຂາບົທທີ ໗ ບົທກາ ຊນີຍ໌**

**ພຣະບັນຍັດ**

[໗໗໐] ກໍ່ກິກຂຸນີໃດເພາະເຂົ້າໃຈຜິດ ເພາະໃຄ່ຄວນຜິດ ໃຫ້ຜູ້ອື່ນໂພນທະນາ ຕ້ອງອາບັດ ປາຈິດຕີຍ໌

ເລື່ອງກິກຂຸນີອັນເຕວາສີນີຂອງພຣະກັທທກາປິລານີ ຈົບ

**ສິກຂາບົທວິກັງຄ໌**

[໗໗໑] ຄຳວ່າ ກໍ່. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ່. . . ໃດ
ຄຳວ່າ ກິກຂຸນີ ມີອະທິບາຍວ່າ ຊື່ວ່າກິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ ເອົາວ່າ ກິກຂຸນີ ໃນຄວາມຫມາຍນີ້
ຄຳວ່າ ເພາະເຂົ້າໃຈຜິດ ຄື ເພາະເຂົ້າໃຈເປັນຢ່າງອື່ນ
ຄຳວ່າ ເພາະໃຄ່ຄວນຜິດ ຄື ເພາະໃຄ່ຄວນເປັນຢ່າງອື່ນ
ຄຳວ່າ ຜູ້ອື່ນ ໄດ້ແກ່ ໃຫ້ອຸປສັມບັນໂພນທະນາ ຕ້ອງອາບັດປາຈິດຕີຍ໌

**ບົທກາຊນີຍ໌**

**ຕິກປາຈິດຕີຍ໌**

[໗໗໔] ອຸປສັມບັນ ກິກຂຸນີສຳຄັນວ່າເປັນອຸປສັມບັນ ໃຫ້ໂພນທະນາ ຕ້ອງອາບັດປາຈິດຕີຍ໌
ອຸປສັມບັນ ກິກຂຸນີບໍ່ແນ່ໃຈ ໃຫ້ໂພນທະນາ ຕ້ອງອາບັດປາຈິດຕີຍ໌
ອຸປສັມບັນ ກິກຂຸນີສຳຄັນວ່າເປັນອະນຸປສັມບັນ ໃຫ້ໂພນທະນາ ຕ້ອງອາບັດປາຈິດຕີຍ໌

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິດຕີຍກັດຫ໌] ໘. ອັນສກາຣວັຄ ສິກຂາບົທທີ່ ໗ ອນາປັດຕິວາຣ

**ທຸກກົຜ**

ກິກຂຸນີໃຫ້ອະນຸປສັມບັນໂພນທະນາ ຕ້ອງອາບັດທຸກກົຜ
ອະນຸປສັມບັນ ກິກຂຸນີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັດທຸກກົຜ

ອນຸປສັມບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກົດ
ອນຸປສັມບັນ ພິກຂຸນີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກົດ

**ອນາປັຕຕິວາຣ**
ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໗໓] ໑. ພິກຂຸນີວິກົລຈິຕ
໔. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໔. ອັນທການວັຄ ສິກຂາບົທທີ ໘ ນິທານວັຕຖຸ**

**໔. ອັນທການວັຄ**

**ສິກຂາບົທທີ ໘**
ວ່າດ້ວຍການສາປແຊ່ງຕົນເອງແລະຜູ້ອື່ນ

**ເຣື່ອງພິກຂຸນີຈັນທກາລີ**
[໗໗໔] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທທເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີທັງຫລາຍບໍ່ເຫັນສິ່ງຂອງຂອງຕົນໄດ້ກ່າວກັບພິກຂຸນີຈັນທກາລີດັ່ງນີ້ວ່າ "ແມ່ເຈົ້າ ທ່ານເຫັນສິ່ງຂອງຂອງພວກເຮົາ ແດ່ບໍ່" ພິກຂຸນີຈັນທກາລີຕຳໜິປະນາມ ໂພນທະນາວ່າ "ຂະນ້ອຍນີ້ແຫລະທີ່ເປັນລັກ ຂະນ້ອຍນີ້ແຫລະບໍ່ມີຄວາມລະອາຍ ພວກແມ່ເຈົ້າທີ່ບໍ່ເຫັນສິ່ງຂອງຂອງຕົນ ຕ່າງພາກັນກ່າວກັບຂະນ້ອຍຢ່າງນີ້ວ່າ 'ເຫັນສິ່ງຂອງຂອງພວກເຮົາແດ່ບໍ່' ແມ່ເຈົ້າ ຖ້າຂະນ້ອຍເອົາສິ່ງຂອງຂອງພວກທ່ານໄປ ຂະນ້ອຍກໍຈົ່ງເປັນຜູ້ບໍ່ແມ່ນສມຕະຍິງ ຈົ່ງເຄື່ອນຈາກພຣົມຈັນຍ໌ ຈົ່ງບັງເກີດໃນນຣົກ ສ່ວນຜູ້ທີ່ກ່າວຫາຂະນ້ອຍດ້ວຍເຣື່ອງທີ່ບໍ່ຈິງກໍຈົ່ງບໍ່ເປັນສມຕະຍິງ ຈົ່ງເຄື່ອນຈາກພຣົມຈັນຍ໌ ຈົ່ງບັງເກີດໃນນຣົກ" ບັນດາພິກຂຸນີຜູ້ມັກນ້ອຍຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈົ່ງໃດແມ່ເຈົ້າຈັນທກາລີ ຈຶ່ງສາປແຊ່ງຕົນເອງແດ່

ຜູ້ອື່ນແດ່ ດ້ວຍນຣົກແດ່ ດ້ວຍພຣົມຈັນຍ໌໑ ແດ່ລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພອກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີຈັດຕຫກາລີສາປແຊ່ງຕົນເອງ

ໝາຍເຫດ :

໑ ສາປແຊ່ງດ້ວຍນຣົກດ້ວຍພຣົມຈັນຍ໌ໃນທີ່ນີ້ ຄືດ່າໂດຍນັຍເປັນຕົ້ນວ່າ ຂໍໃຫ້ຂະນ້ອຍຈົງບັງເກີດໃນນຣົກອເວຈີ ຫລືຂໍໃຫ້ຜູ້ອື່ນຈົງບັງເກີດໃນນຣົກອເວຈີ ຂໍໃຫ້ຂະນ້ອຍເປັນຄຣີຫັສຖ໌ ກັບໄປນຸ່ງຜ້າຂາວ ເປັນປຣິພາຊົກາ ຫລືຂໍໃຫ້ຜູ້ອື່ນຈົ່ງເປັນຢ່າງທີ່ຂະນ້ອຍເປັນນີ້ ຄືສາປແຊ່ງຕນແລະຜູ້ອື່ນໃຫ້ຕົກນຣົກ ສາປແຊ່ງຕນແລະຜູ້ອື່ນໃຫ້ເຄື່ອນຈາກພຣົມຈັນຍ໌ (ວິ. ອ. ໒/໗໗໕/໔໙໗)

ແດ່ ຜູ້ອື່ນແດ່ ດ້ວຍນຣົກແດ່ ດ້ວຍພຣົມຈັນຍ໌ແດ່ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທຄເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທຄເຈົ້າຊົງຕຳຫນິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີຈັດຕຫກາລີຈຶ່ງສາປແຊ່ງຕົນເອງແດ່ ຜູ້ອື່ນແດ່ ດ້ວຍນຣົກແດ່ ດ້ວຍພຣົມຈັນຍ໌ແດ່ລະ ພິກຂຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໕] ກໍພິກຂຸນີໃດສາປແຊ່ງຕົນເອງຫລືຜູ້ອື່ນດ້ວຍນຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກຂຸນີຈັດຕຫກາລີ ຈົບ

**ສິກຂາບົທວິກັງຄ໌**

[໗໗໖] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມຫມາຍນີ້

ຄຳວ່າ ຕົນເອງ ຄື ສະເພາະຕົວເອງ

ຄຳວ່າ ຜູ້ອື່ນ ໄດ້ແກ່ ອຸປສັມບັນ ພິກຂຸນີສາປແຊ່ງ(ອຸປສັມບັນ)ດ້ວຍນຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໗໗] ອຸປສັມບັນ ພິກຂຸນີສຳຄັນວ່າເປັນອຸປສັມບັນ ສາປແຊ່ງດ້ວຍນຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌

ອຸປສັມບັນ ພິກຂຸນີບໍ່ແນ່ໃຈ ສາປແຊ່ງດ້ວຍນຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌

ອຸປສັມບັນ ພິກຂຸນີສຳຄັນວ່າເປັນອະນຸປສັມບັນ ສາປແຊ່ງດ້ວຍນຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກະຕ**

ພິກຂຸນີສາປແຊ່ງດ້ວຍ(ຄຳທີ່ບົ່ງເຖິງ)ກຳເນີດສັຕວ໌ເດັຽຣະສານ ເປຕວິສັຍ ຫລືຄົນໂຊຄຮ້າຍ໑ ຕ້ອງອາບັຕິທຸກກະຕ

ພິກຂຸນີສາປແຊ່ງອະນຸປສັມບັນ ຕ້ອງອາບັຕິທຸກກະຕ

ອະນຸປສັມບັນ ພິກຂຸນີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກະຕ

ອະນຸປສັມບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕ

ອະນຸປສັມບັນ ພິກຂຸນີສຳຄັນວ່າເປັນອະນຸປສັມບັນ ຕ້ອງອາບັຕິທຸກກະຕ

**ອະນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໗໘] ໑. ພິກຂຸນີມຸ່ງອັຕຖະ໔

໔. ພິກຂຸນີມຸ່ງລົມມ໌

໖. ພິກຂຸນີມຸ່ງສັ່ງສອນ

໔. ພິກຂຸນີວິກົລຈິດ
໕. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໙ ຈົບ

**ໝາຍເຫດ :**
໑ ຄືສາປແຊ່ງໃຫ້ເປັນຄົນມີຮູບຮ່າງແປລກປຣະຫລາດວ່າ "ຂໍໃຫ້ເຮົາຕາບອດ ເປັນງ່ອຍ ຫລື ໃຫ້ຄົນອື່ນເປັນຢ່າງນີ້ໆ" (ກັງຂາ. ຜີກາ ໔໙໗)
໒ "ມຸ່ງອັນຖະ" ໃນທີ່ນີ້ໝາຍເຖິງກ່າວອັນຖະກຖາ (ວິ. ອ. ໒/໗໗໗/໔໙໗)
໓ "ມຸ່ງລົມ" ໃນທີ່ນີ້ໝາຍເຖິງບອກບາລີ (ວິ. ອ. ໒/໗໗໗/໔໙໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕຫ໌] ໒. ອັນຄກາຣວັຄ ສິກຂາບົດທີ ໑໐ ນິທານວັຕຖຸ**

**໒. ອັນຄກາຣວັຄ**

**ສິກຂາບົດທີ ໑໐**
ວ່າດ້ວຍການຮ້ອງໄຫ້ທຸບຕີຕົນເອງ

**ເຣື່ອງພິກຂຸນີຈັດຕກາລີ**
[໗໗໙] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຮາມຂອງອນາຖບິດ ທຶກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີຈັດຕກາລີຜິດຖຽງກັບພິກຂຸນີທັງຫລາຍແລ້ວຮ້ອງ ໄຫ້ທຸບຕີຕົນເອງບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຈັດຕກາລີຈຶ່ງຮ້ອງໄຫ້ທຸບຕີຕົນເອງລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກ ພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົດ**
ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫດຸ ຊົງສອບຖາມພິກຂຸ ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີຈັດຕກາລີຮ້ອງໄຫ້ທຸບຕີຕົນເອງ ແມ່ນແທ້ບໍ"

ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈັນທກາລີຈຶ່ງຮ້ອງໄຫ້ທຸບຕີຕົນເອງລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍ ຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໐] ກໍພິກສຸນີໃດຮ້ອງໄຫ້ທຸບຕີຕົນເອງ ຕ້ອງອາບັຕິປາຈິຕຕີຍ໌

ເລື່ອງພິກສຸນີຈັນທກາລີ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໔. ອັນທກາຣວັຄ ສິກຂາບົທທີ ໑໐ ອນາປັຕຕິວາຣ

### ສິກຂາບົທວິພັງຄ໌

[໗໗໑] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ຄຳວ່າ ຕົນເອງ ຄື ສະເພາະຕົນເອງ

ພິກສຸນີຮ້ອງໄຫ້ທຸບຕີຕົນເອງ ຕ້ອງອາບັຕິປາຈິຕຕີຍ໌ ທຸບຕີ(ຕົນເອງ)ແຕ່ບໍ່ຮ້ອງໄຫ້ ຕ້ອງອາບັຕິທຸກກົຕ ຮ້ອງໄຫ້ແຕ່ບໍ່ທຸບຕີ(ຕົນເອງ) ຕ້ອງອາບັຕິທຸກກົຕ

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໗໔] ໑. ພິກສຸນີຖືກຄວາມເສື່ອມຍາຕ ເສື່ອມໂພຄະຫລືໂຣຄຄຸມເອົາ ຮ້ອງໄຫ້ແຕ່ບໍ່ທຸບຕີຕົນເອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ
ອັນລກາຣວັຄທີ ໔ ຈົບ

## ພຣະວິນັຍປີດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕຑ໌] ໖. ນັຄຄວັຄ ສິກຂາບົດທີ ໑ ນິທານວັຕຖຸ

**໖. ນັຄຄວັຄ**

ໝວດວ່າດ້ວຍການເປືອຍກາຍ

**ສິກຂາບົດທີ ໑**

ວ່າດ້ວຍການເປືອຍກາຍອາບນ້ຳ

### ເຣື້ອງພິກຂຸນີຫລາຍຮູບ

[໗໗໖] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຮາມຂອງອນາຖບິຕ ໝິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີຫລາຍຮູບເປືອຍກາຍອາບນ້ຳໃນແມ່ນ້ຳອຈິຣວດີ ທ່າ ດຽວກັບຍິງແພສຍາ ພວກຍິງແພສຍາເຍີ້ຍຫຍັນພິກຂຸນີເຫລົ່ານັ້ນວ່າ "ແມ່ເຈົ້າທັງຫລາຍ ພວກ ທ່ານຍັງເປັນສາວ ຈະປະພຶດພຣົມຈັນຍ໌ໄປເປັນຫຍັງກັນ ລັມດາມນຸຫຍ໌ຄວຣບໍຣິໂພຄກາມ ບໍ່ແມ່ນ ບໍ ຕໍ່ເມື່ອຊຣາພວກທ່ານຈຶ່ງຄ່ອຍປະພຶດພຣົມຈັນຍ໌ ເມື່ອເປັນຢ່າງນີ້ ຊື່ວ່າໄດ້ຈັບສວຍເອົາປໂຍດ ທັງສອງແລ້ວ" ພວກພິກຂຸນີຖືກພວກຍິງແພສຍາເຍີ້ຍຫຍັນຕ່າງເກີ້ເຂີນ ຄັນກັບໄປສຳນັກແລ້ວຈຶ່ງ ບອກເຣື້ອງນັ້ນໃຫ້ພິກຂຸນີທັງຫລາຍຊາບ ພວກພິກຂຸນີໄດ້ບອກເຣື້ອງນີ້ໃຫ້ພິກຂຸທັງຫລາຍຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

### ຊົງປະຊຸມສົງຆ໌ບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະກາຄຊົງສະແດງລັມມີກຖາເພາະເຣື້ອງນີ້ເປັນຕົ້ນເຫຕຸ ຮັບສັ່ງກັບພິກຂຸທັງ ຫລາຍວ່າ "ພິກຂຸທັງຫລາຍ ເພາະເຫຕຸນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸນີທັງຫລາຍ ໂດຍ ອາສັຍອຳນາຈປໂຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງຆ໌

ຯລຯ

໑໐. ເພື່ອເອື້ອເຟື້ອວິນັຍ໑

ແລ້ວຈຶ່ງຮັບສັ່ງໃຫ້ກິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

ໝາຍເຫດ :
໑ ດູຄວາມພິສດາຣຂໍ້ ໗໕໗ ໜ້າ ໔-໕ ໃນເຫລັ້ມນີ້

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຕຫ໌] ໓. ນັຄຄວັຄ ສິກຂາບົທທີ ໑ ອນາປັຕຕິວາຣ**

**ພຣະບັນຍັດ**

[໗໗໔] ກໍກິກສຸນີໃດເປືອຍກາຍອາບນ້ຳ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງກິກສຸນີຫລາຍຮູບ ຈົບ

**ສິກຂາບົທວິກັງຄ໌**

[໗໗໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ
ຄຳວ່າ ກິກສຸນີ ມີອະທິບາຍວ່າ ຊື່ວ່າກິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ເປືອຍກາຍອາບນ້ຳ ຄື ບໍ່ນຸ່ງຜ້າຫລືບໍ່ຫົ່ມຜ້າອາບນ້ຳ ຕ້ອງອາບັຕິທຸກກຝໃນຂຕະທີ່ອາບ ອາບເສັດແລ້ວ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ກິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໗໖] ໑. ກິກສຸນີຖືກໂຈຣລັກຈີວອນຫລືຈີວອນຫາຍ
໒. ກິກສຸນີຜູ້ມີເຫຕຸຂັດຂ້ອງ
໓. ກິກສຸນີວິກົລຈິຕ
໔. ກິກສຸນີຕົ້ນບັນຍັດ

ສິກຂາບົທທີ ໑ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕຫ໌] ໓. ນັຄຄວັຄ ສິກຂາບົທທີ ໔ ນິທານວັຕຖຸ

## ໓. ນັຄຄວັຄ

### ສິກຂາບົທທີ ໔
ວ່າດ້ວຍການໃຊ້ຜ້າອາບນ້ຳບໍ່ໄດ້ຂນາດ

### ເຣື້ອງພິກສຸຕີຈັພພັຄຄີຍ໌
[໗໓໗] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທສເຈົ້າປະທັບຢູ່ ຕະພຣະເຊຕວັນ ອາຮາມຂອງອນາຖບິຕຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພຣະຜູ້ມີພຣະກາຄຊົງອນຸຍາຕໃຫ້ພິກສຸຕີໃຊ້ຜ້າອາບນ້ຳ ພວກພິກສຸຕີຈັພພັຄຄີຍ໌ຄິດວ່າ "ພຣະຜູ້ມີພຣະກາຄຊົງອນຸຍາຕຜ້າອາບນ້ຳແລ້ວ" ພາກັນໃຊ້ຜ້າອາບນ້ຳບໍ່ໄດ້ຂນາດ ຍ່າງຫງອຍ້ອຍຂ້າງຫນ້າແດ່ ຍ້ອຍຂ້າງຫລັງແດ່ ບັນດາພິກສຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸຕີຈັພພັຄຄີຍ໌ຈຶ່ງໃຊ້ຜ້າອາບນ້ຳບໍ່ໄດ້ຂນາດລະ" ຄັນແລ້ວ ພິກສຸຕີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

### ຊົງປະຊຸມສົງຫ໌ບັນຍັດສິກຂາບົທ
ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຫ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸຕີຈັພພັຄຄີຍ໌ໃຊ້ຜ້າອາບນ້ຳບໍ່ໄດ້ຂນາດ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸຕີຈັພພັຄຄີຍ໌ຈຶ່ງໃຊ້ຜ້າອາບນ້ຳບໍ່ໄດ້ຂນາດລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕຫ໌] ໓. ນັຄຄວັຄ ສິກຂາບົທທີ ໔ ບົທກາຊນີຍ໌

### ພຣະບັນຍັດ

[໗໗໗] ກໍພິກບຸຕີຜູ້ຈະໃຫ້ທຳຜ້າອາບນ້ຳ ຄວນເຮັດໃຫ້ໄດ້ຂນາດ ຂນາດໃນຂໍ້ນັ້ນຄື ຍາວ ໔ ຄືບ ກວ້າງ ໒ ຄືບ ໂດຍຄືບສຸຄຕ໑ ເຮັດໃຫ້ເກີນຂນາດນັ້ນ ຕ້ອງອາບັຕິປາຈິຕຕີຍ໌ທີ່ຊື່ອ່າເຉທນກະ໒

ເຣື່ອງພິກບຸຕີຈັຜພັຄຄີຍ໌ ຈົບ

**ສິກຂາບົທວິພັງຄ໌**

[໗໗໘] ທີ່ຊື່ອ່າ ຜ້າອາບນ້ຳ ໄດ້ແກ່ ຜ້າທີ່ໃຊ້ນຸ່ງອາບນ້ຳ

ຄຳວ່າ ຜູ້ຈະໃຫ້ທຳ ອະທິບາຍວ່າ ພິກບຸຕີທຳເອງຫລືໃຊ້ຜູ້ອື່ນໃຫ້ທຳ ຄວນເຮັດໃຫ້ໄດ້ຂນາດ ຂນາດໃນຂໍ້ນັ້ນ ຄື ຍາວ ໔ ຄືບ ກວ້າງ ໒ ຄືບ ໂດຍຄືບສຸຄຕ ພິກບຸຕີທຳເອງຫລືໃຊ້ຜູ້ອື່ນໃຫ້ທຳເກີນຂນາດນັ້ນ ຕ້ອງອາບັຕິທຸກກຸຕໃນຂະນະທີ່ທຳ ຕ້ອງອາບັຕິປາຈິຕຕີຍ໌ ເພາະໄດ້ມາ ຕ້ອງຕັດຂອງນັ້ນເສັຽກ່ອນແລ້ວສະແດງອາບັຕິ

**ບົທກາຊນີຍ໌**

**ປາຈິຕຕີຍ໌**

[໗໘໐] ພິກບຸຕີທຳຜ້າອາບນ້ຳທີ່ຕົນທຳຄ້າງໄວ້ຕໍ່ຈົນສຳເຣັຈດ້ວຍຕົນເອງ ຕ້ອງອາບັຕິປາຈິຕຕີຍ໌
ພິກບຸຕີໃຊ້ຜູ້ອື່ນໃຫ້ທຳຜ້າອາບນ້ຳທີ່ຕົນທຳຄ້າງໄວ້ຕໍ່ຈົນສຳເຣັຈ ຕ້ອງອາບັຕິປາຈິຕຕີຍ໌
ພິກບຸຕີທຳຜ້າອາບນ້ຳທີ່ຜູ້ອື່ນທຳຄ້າງໄວ້ຕໍ່ຈົນສຳເຣັຈດ້ວຍຕົນເອງ ຕ້ອງອາບັຕິປາຈິຕຕີຍ໌
ພິກບຸຕີໃຊ້ຜູ້ອື່ນໃຫ້ທຳຜ້າອາບນ້ຳທີ່ຜູ້ອື່ນທຳຄ້າງໄວ້ຕໍ່ຈົນສຳເຣັຈ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ຊື່ອມາຕຣາວັດ ໑ ຄືບສຸຄຕ ເທົ່າກັບ ໓ ຄືບ ຂອງຄົນສັຕກຸານປານກາງ ເທົ່າກັບ ໑ ສອກ ເຄິ່ງ ໂດຍສອກຊ່າງໄມ້ ແຕ່ໃນປັຈຈຸບັນໃຫ້ຖືຕາມໄມ້ເມຕຣ ຄືເທົ່າກັບ ໒໕ ເຊນຕິເມຕຣ (ວິ. ອ ໒/໓໔໗-໓໔໘/໓໑)

໒ ຄຳວ່າ "ເຉທນກະ" ເປັນຊື່ສະເພາະຂອງສິກຂາບົທນີ້ ຫມາຍເຖິງອາບັຕິທີ່ເມື່ອຕ້ອງເຂົ້າແລ້ວຈຳເປັນຕ້ອງຕັດຫລືແຫກຜ້າອາບນ້ຳທີ່ເກີນຂນາດອອກເສັຽກ່ອນຈຶ່ງຈະສາມາດສະແດງອາບັຕິຕກໄປໄດ້

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໓. ນັຄຄວັຄ ສິກຂາບົທທີ ໔ ອນາປັຕຕິວາຣ

### ທຸກກຸກກຸຍ
ກິກບຸຕີທຳເອງຫລືໃຊ້ຜູ້ອື່ນໃຫ້ທຳເພື່ອປໂຍດແກ່ຜູ້ອື່ນ ຕ້ອງອາບັຕິທຸກກຸຍ
ກິກບຸຕີໄດ້ຜ້າອາບນ້ຳທີ່ຜູ້ອື່ນທຳໄວ້ມາໃຊ້ສອຍ ຕ້ອງອາບັຕິທຸກກຸຍ

### ອນາປັຕຕິວາຣ
ກິກບຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໙໑] ໑. ກິກບຸຕີທຳຜ້າອາບນ້ຳໄດ້ຂນາດ
໒. ກິກບຸຕີທຳຜ້າອາບນ້ຳຫນ້ອຍກວ່າຂນາດ
໓. ກິກບຸຕີໄດ້ຜ້າອາບນ້ຳທີ່ຜູ້ອື່ນທຳໄວ້ເກີນຂນາດມາຕັດໃຫ້ໄດ້ຂນາດແລ້ວໃຊ້ສອຍ
໔. ກິກບຸຕີທຳເປັນເພດານ ຜ້າປູພື້ນ ຜ້າມ່ານ ຜ້າເປືອກເສື່ອຫລືຫມອນ
໕. ກິກບຸຕີວິກົລຈິຕ
໖. ກິກບຸຕີຕົ້ນບັນຍັດ

ສິກຂາບົທທີ ໔ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໓. ນັຄຄວັຄ ສິກຂາບົທທີ ໓ ນິທານວັຕຖຸ

### ໓. ນັຄຄວັຄ

### ສິກຂາບົທທີ ໓
ວ່າດ້ວຍການເລາະຈີວອນແລ້ວບໍ່ຍິບ

### ເຣື່ອງກິກບຸຕີຖຸລລນັນທາ
[໗໙໒] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຕະ ພຣະເຊຕວັນ ອາຮາມຂອງອນາຖບິຕ ຫຶກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກບຸຕີຮູບນຶ່ງທຳຈີວອນບໍ່ດີ ຍິບບໍ່ດີທັງທີ່ໃຊ້ຜ້າສຳລັບທຳຈີວອນຣາຄາແພງ ກິກບຸຕີຖຸລລນັນທາໄດ້ກ່າວກັບກິກບຸຕີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ຜ້າສຳລັບທຳຈີວອນ

ຂອງທ່ານດີແມ່ນແທ້ແຕ່ກັບທຳຈີວອນບໍ່ດີ ຍິບບໍ່ດີ" ກິກຂຸນີນັ້ນກ່າວວ່າ "ແມ່ເຈົ້າ ຂະນ້ອຍຈະເລາະອອກ ທ່ານຈະຍິບໃຫ້ຫລື" ກິກຂຸນີຖຸລລນັນທາກ່າວວ່າ "ແມ່ເຈົ້າ ຂະນ້ອຍຈະຍິບໃຫ້" ຄັນແລ້ວກິກຂຸນີນັ້ນຈຶ່ງເລາະຈີວອນແລ້ວມອບໃຫ້ກິກຂຸນີຖຸລລນັນທາ ກິກຂຸນີຖຸລລນັນທາ ກ່າວວ່າ "ຂະນ້ອຍຈະຍິບໃຫ້ ຂະນ້ອຍຈະຍິບໃຫ້" ແຕ່ບໍ່ຍິບໃຫ້ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຍິບ ກິກຂຸນີນັ້ນຈຶ່ງບອກເຣື້ອງນັ້ນໃຫ້ກິກຂຸນີທັງຫລາຍຊາບ ບັນດາກິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລນັນທາຈຶ່ງໃຫ້ເລາະຈີວອນຂອງກິກຂຸນີແລ້ວບໍ່ຍິບໃຫ້ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຍິບລະ" ຄັນແລ້ວ ກິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງฆ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງฆ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ກິກຂຸນີຖຸລລນັນທາໃຫ້ເລາະຈີວອນຂອງກິກຂຸນີແລ້ວບໍ່ຍິບໃຫ້ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຍິບ ແມ່ນແທ້ບໍ" ກິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ກິກຂຸທັງຫລາຍ ຈັ່ງໃດກິກຂຸນີຖຸລລນັນທາຈຶ່ງໃຫ້ເລາະຈີວອນຂອງກິກຂຸນີແລ້ວບໍ່ຍິບໃຫ້ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນຍິບລະ ກິກຂຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗ຓ໓] ກໍກິກຂຸນີໃດເລາະຫລືໃຊ້ໃຫ້ເລາະຈີວອນຂອງກິກຂຸນີແລ້ວ ພາຍຫລັງກິກຂຸນີນັ້ນຜູ້ບໍ່ມີອັນຕຣາຍ໑ ບໍ່ຍິບ ບໍ່ຂວນຂວາຍໃຊ຺ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ໔ ຕ້ອງອາບັຕິປາຈິຕຕິຍ໌

ເຣື້ອງກິກຂຸນີຖຸລລນັນທາ ຈົບ

**ສິກຂາບົທວິກັງຄ໌**

[໗ຓ໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ ຄຳວ່າ ກິກຂຸນີ ມີອະທິບາຍວ່າ ຊື່ວ່າກິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ຂອງກິກຸນີ ໄດ້ແກ່ ກິກຸນີຮູບອື່ນ
ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ຝ ຊນິດ ຢ່າງໃດຢ່າງນຶ່ງ
ຄຳວ່າ ເລາະ ຄື ເລາະດ້ວຍຕົນເອງ
ຄຳວ່າ ໃຊ້ໃຫ້ເລາະ ຄື ໃຊ້ຜູ້ອື່ນໃຫ້ເລາະ

ໝາຍເຫດ :
໑ ຫມາຍເຖິງບໍ່ຕົກຢູ່ໃນອັນຕຣາຍຢ່າງໃດຢ່າງນຶ່ງໃນອັນຕຣາຍ ໑໐ ຢ່າງ ຄື (໑) ພຣະຣາຊາສເດັຈມາ (໒) ໂຈຣມາປຸ້ນ (໓) ໄຟໄຫມ້ (໔) ນ້ຳຫລາກມາ (໕) ຄົນມາມາກ (໖) ຜີເຂົ້າກິກຸ (໗) ສັຕວ໌ຮ້າຍເຂົ້າມາໃນວັດ (໘) ງູເລືອເຂົ້າມາ (໙) ກິກຸເປັນໂຣຄຮ້າຍ (໑໐) ເກີດອັນຕຣາຍແກ່ພຣມຫາຈຣຣຍ໌ ເຊັ່ນມີຄົນມາຈັບກິກຸນີສຶກ (ວິ. ອ. ໒/໘໙໓-໔/໕໐໐, ດູ ວິ. ມ. ໔/໑໕໐/໑໕໙)
໒ "ພົ້ນ ໔-໕ ວັນ" ຫມາຍເຖິງລ່ວງເລີຍ ໕ ວັນ ນັບຈາກວັນທີ່ເລາະຈີວອນນັ້ນ (ສາຣຕຖ. ຝີກາ. ໓/໘໙໓/໑໕໓)

ຄຳວ່າ ພາຍຫລັງ ກິກຸນີນັ້ນຜູ້ບໍ່ມີອັນຕຣາຍ ຄື ເມື່ອບໍ່ມີອັນຕຣາຍ
ຄຳວ່າ ບໍ່ຍິບ ຄື ບໍ່ຍິບດ້ວຍຕົນເອງ
ຄຳວ່າ ບໍ່ຂົນຂວາຍໃຊ້ຜູ້ອື່ນໃຫ້ຍິບ ຄື ບໍ່ສັ່ງຜູ້ອື່ນ
ຄຳວ່າ ພົ້ນ ໔-໕ ວັນ ຄື ເກັບໄວ້ໄດ້ ໔-໕ ວັນ ພອທອດທຸຣະວ່າ "ເຮົາຈັກບໍ່ຍິບ ຈັກບໍ່ຂົນຂວາຍໃຊ້ຜູ້ອື່ນໃຫ້ຍິບ" ຕ້ອງອາບັຕິປາຈິຕຕີຍ໌

**ບົທກາຊນີຍ໌**

**ຕິກປາຈິຕຕີຍ໌**

[໘໙໕] ອຸປສັມບັນ ກິກຸນີສຳຄັນວ່າເປັນອຸປສັມບັນ ເລາະຫລືໃຊ້ໃຫ້ເລາະຈີວອນ ພາຍຫລັງກິກຸນີນັ້ນຜູ້ບໍ່ມີອັນຕຣາຍ ບໍ່ຍິບ ທັງບໍ່ຂົນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ກິກຸນີບໍ່ແນ່ໃຈ ເລາະຫລືໃຊ້ໃຫ້ເລາະຈີວອນ ພາຍຫລັງກິກຸນີນັ້ນຜູ້ບໍ່ມີອັນຕຣາຍ

ບໍ່ຍິບ ທັງບໍ່ຂິນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິປາຈິຕຕິຍ໌
ອຸປສັມບັນ ກິກຊຸຕີສຳຄັນວ່າເປັນອນຸປສັມບັນ ເລາະຫລືໃຊ້ໃຫ້ເລາະຈີວອນ ພາຍຫລັງກິກຊຸຕີນັ້ນ
ຜູ້ບໍ່ມີອັນຕຣາຍ ບໍ່ຍິບ ທັງບໍ່ຂິນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິປາຈິຕຕິຍ໌

**ທຸກກຸຍ**

ກິກຊຸຕີເລາະຫລືໃຊ້ໃຫ້ເລາະບໍຣິຂາຣຢ່າງອື່ນ ພາຍຫລັງກິກຊຸຕີນັ້ນຜູ້ບໍ່ມີອັນຕຣາຍ ບໍ່ຍິບ
ທັງບໍ່ຂິນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິທຸກກຸຍ
ກິກຊຸຕີເລາະຫລືໃຊ້ໃຫ້ເລາະຈີວອນຫລືບໍ່ຣິຂາຣຢ່າງອື່ນຂອງອນຸປສັມບັນ ພາຍຫລັງກິກຊຸຕີນັ້ນ
ຜູ້ບໍ່ມີອັນຕຣາຍ ບໍ່ຍິບ ທັງບໍ່ຂິນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິທຸກກຸຍ
ອນຸປສັມບັນ ກິກຊຸຕີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກຸຍ
ອນຸປສັມບັນ ກິກຊຸຕີບໍ່ແນ່ໃຈ ຕ້ອງອາບັຕິທຸກກຸຍ
ອນຸປສັມບັນ ກິກຊຸຕີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກຸຍ

**ອນາປັຕຕິວາຣ**

ກິກຊຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗ລຝ] ໑. ກິກຊຸຕີບໍ່ຍິບໃນເມື່ອມີອັນຕຣາຍ
໒. ກິກຊຸຕີແສວງຫາແລ້ວບໍ່ໄດ້
໓. ກິກຊຸຕີກຳລັງທຳກາຣຍິບ ພົ້ນ ໔-໕ ວັນ
໔. ກິກຊຸຕີຜູ້ເປັນໄຂ້
໕. ກິກຊຸຕີຜູ້ມີເຫຕຸຂັດຂ້ອງ
໖. ກິກຊຸຕີວິກົລຈິຕ
໗. ກິກຊຸຕີຕົ້ນບັນຍັດ

ສິກຂາບົທທີ ໓ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໓. ນັຄຄວັຄ ສິກຂາບົທທີ ໔ ນິທານວັຕຖຸ**

**໓. ນັຄຄວັຄ**

### ສິກຂາບົດທີ ໔
ວ່າດ້ວຍການບໍ່ຜັດປ່ຽນປ່ຽນສັງຄາຜິຕາມກຳໜົດ

### ເຣື້ອງກິກຂຸນີຫລາຍຣູບ
[໗໘໗] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທສເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິດ ທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ກິກຂຸນີທັງຫລາຍຝາກຈີວອນໄວ້ກັບພວກກິກຂຸນີ ມີພຽງ ອຸຕຕຣາສົງຄ໌ກັບອັນຕຣວາສກຫລືກຈາຣິກໄປສູ່ຊົນບົທ ຈີວອນນັ້ນເກັບໄວ້ນານຈຶ່ງຂຶ້ນຣາ ພວກ ກິກຂຸນີ(ທີ່ຮັບຝາກ)ຈຶ່ງນຳອອກຜຶ່ງແດດ ກິກຂຸນີທັງຫລາຍໄດ້ກ່າວກັບກິກຂຸນີ(ທີ່ຮັບຝາກ)ເຫລົ່າ ນັ້ນດັ່ງນີ້ວ່າ "ແມ່ເຈົ້າທັງຫລາຍ ຈີວອນທີ່ຂຶ້ນຣາເຫລົ່ານີ້ເປັນຂອງໃຜ" ລຳດັບນັ້ນ ພວກກິກຂຸນີ(ທີ່ ຮັບຝາກ)ຈຶ່ງບອກເຣື້ອງນັ້ນໃຫ້ກິກຂຸນີທັງຫລາຍຊາບ ບັນດາກິກຂຸນີຜູ້ມັກນ້ອຍ ຯລຯ ພາກັນ ຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດກິກຂຸນີທັງຫລາຍຈຶ່ງຝາກຈີວອນໄວ້ກັບພວກກິກຂຸນີແລ້ວ ມີພຽງອຸຕຕຣາສົງຄ໌ກັບອັນຕຣວາສກຈາຣິກໄປສູ່ຊົນບົທລະ" ຄັນແລ້ວ ກິກຂຸນີເຫລົ່ານັ້ນໄດ້ນຳ ເຣື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄ ໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ
ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸ ທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ກິກຂຸນີທັງຫລາຍຝາກຈີວອນໄວ້ກັບພວກກິກຂຸນີແລ້ວມີ ພຽງອຸຕຕຣາສົງຄ໌ກັບອັນຕຣວາສກຈາຣິກໄປສູ່ຊົນບົທ ແມ່ນແທ້ບໍ" ກິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ກິກຂຸທັງຫລາຍ ຈັ່ງ ໃດກິກຂຸນີຈຶ່ງຝາກຈີວອນໄວ້ກັບກິກຂຸນີແລ້ວມີພຽງອຸຕຕຣາສົງຄ໌ກັບອັນຕຣວາສກຈາຣິກໄປສູ່ຊົ ນບົທລະ ກິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ ກິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ
[໗໘໘] ກໍກິກຂຸນີໃດໃຫ້ອາຣະຜັດປ່ຽນປ່ຽນສັງຄາຜິ໑ ທີ່ມີກຳໜົດຣະຍະເວລາ ໕ ວັນລ່ວງເລີຍ ໄປ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກษຸຕີຫລາຍຮູບ ຈົບ

**ສິກຂາບົທວິກັງຄ໌**

[໘໙໙] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກษຸຕີ ມີອະທິບາຍວ່າ ຊື່ວ່າພິກษຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ວ່າ ພິກษຸຕີ ໃນຄວາມຫມາຍນີ້

ຄຳວ່າ ໃຫ້ອາຣະຜັດປ່ຽນປ່ຽນສັງຄາຕິທີ່ມີກຳຫນົດຣະຍະເວລາ ໕ ວັນລ່ວງເລີຍໄປອະທິບາຍວ່າ ບໍ່ນຸ່ງ ບໍ່ຫົ່ມ ບໍ່ຜຶ່ງຈີວອນ ໕ ຜືນ ສິ້ນວັນທີ ໕ ຄືໃຫ້ລ່ວງເລີຍໄປເປັນວັນທີ່ ໕ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ປາຈິຕຕີຍ໌**

[໙໐໐] ລ່ວງເລີຍ ໕ ວັນ ພິກษຸຕີສຳຄັນວ່າລ່ວງເລີຍ ໕ ວັນແລ້ວ ຕ້ອງອາບັຕິປາຈິຕຕີຍ໌
ລ່ວງເລີຍ ໕ ວັນ ພິກษຸຕີບໍ່ແນ່ໃຈ ຕ້ອງອາບັຕິປາຈິຕຕີຍ໌
ລ່ວງເລີຍ ໕ ວັນ ພິກษຸຕີສຳຄັນວ່າຍັງບໍ່ລ່ວງເລີຍ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ຄຳວ່າ "ສັງຄາຕິ" ໃນທີ່ນີ້ຫມາຍເຖິງຈີວອນ ໕ ຜືນຂອງພິກษຸຕີ ຄື (໑) ສັງຄາຕິ (໒) ອຸຕຕຣາສົງຄ໌ (໓) ອັນຕຣວາສກ (໔) ຜ້າອາບນ້ຳ (໕) ຜ້າຮັດຖັນ ພິກษຸຕີຕ້ອງນຳຜ້າ ໕ ຜືນນີ້ອອກມາໃຊ້ສອຍຫລືຜຶ່ງແດດ ຫ້າມເກັບໄວ້ເກີນ ໕ ວັນ ຖ້າເກັບຜືນໃດຜືນນຶ່ງໄວ້ເກີນ ໕ ວັນ ຕ້ອງອາບັຕິປາຈິຕຕີຍ໌ : ເກັບໄວ້ ໑ ຜືນ ຕ້ອງອາບັຕິ ໑ ຕົວ ເກັບໄວ້ ໕ ຜືນ ຕ້ອງອາບັຕິ ໕ ຕົວ (ວິ. ອ. ໒ /໓໙໘-໙/໕໐໐-໕໐໑, ກງ໌ຂາ. ອ. ໓໘໕, ສາຣຕຖ. ຕີກາ ໓/໘໙໘/໑໕໔)

**ພຣະວິນັຍປິຕົກ ພິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຕຫ໌] ໓. ນັຄຄວັຄ ສິກຂາບົທທີ ໔ ອນາປັຕຕິວາຣ**

ເຫລົ່ານີ້ຈຶ່ງເບິ່ງບໍ່ເຫັນທິສທາງ" ກິກສຸຕີທັງຫລາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ລຳດັບນັ້ນກິກສຸຕີເຫລົ່ານັ້ນຈຶ່ງບອກເຣື້ອງນີ້ໃຫ້ກິກສຸທັງຫລາຍຊາບ ພວກກິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະກາຄຊົງສະແດງທັມມີກຖາເພາະເຣື້ອງນີ້ເປັນຕົ້ນເຫຕຸ ຮັບສັ່ງກັບກິກສຸທັງຫລາຍວ່າ "ກິກສຸທັງຫລາຍ ເພາະເຫຕຸນັ້ນ ເຮົາຈະບັນຍັດສິກຂາບົທແກ່ກິກສຸຕີທັງຫລາຍ ໂດຍອາສັຍອຳນາຈປໂຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງຄ໌

ຯລຯ

໙. ເພື່ອຄວາມຕັ້ງໝັ້ນແຫ່ງສັທທັມ

໑໐. ເພື່ອເອື້ອເຟື້ອວິນັຍ

ກິກສຸທັງຫລາຍ ກໍກິກສຸຕີທັງຫລາຍຄວນຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຓ໌] ໔. ຕຸວັຜຜວັຄ ສິກຂາບົທທີ ໑໐ ອນາປັຕຕິວາຣ**

**ພຣະບັນຍັດ**

[໙໗໔] ກໍກິກສຸຕີໃດຈຳພັນສາແລ້ວ ບໍ່ຫລີກຈາຣິກໄປ ໂດຍທີ່ສຸດແມ່ນສິ້ນຣະຍະທາງ ໕-໖ໂຍຊນ໌ ຕ້ອງອາບັຕິປາຈິຕຕີຍ໌໑

ເຣື້ອງກິກສຸຕີຫລາຍຮູບ ຈົບ

**ສິກຂາບົທວິກັງຄ໌**

[໙໗໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ ຄຳວ່າ ກິກສຸຕີ ມີອະທິບາຍວ່າ ຊື່ວ່າກິກສຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກສຸຕີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຈຳພັນສາແລ້ວ ຄື ຢູ່ຈຳພັນສາຕົ້ນ ໓ ເດືອນ ຫລືຕລອດພັນສາຫລັງ ໓ ເດືອນ ພວ

ທອດລຸຣະວ່າ "ເຮົາຈະບໍ່ຫລີກຈາຣິກໄປໂດຍທີ່ສຸດແມ່ນສິ້ນຣະຍະທາງ ໕-໖ ໂຍຊນ໌" ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ກິກຂຸດີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໗໖] ໑. ກິກຂຸດີບໍ່ຈາຣິກໄປເມື່ອມີອັນຕຣາຍ

໒. ກິກຂຸດີແສວງຫາກິກຂຸດີຜູ້ເປັນເພື່ອນບໍ່ໄດ້

໓. ກິກຂຸດີເປັນໄຂ້

໔. ກິກຂຸດີຜູ້ມີເຫຕຸຂັດຂ້ອງ

໕. ກິກຂຸດີວິກົລຈິຕ

໖. ກິກຂຸດີຕົ້ນບັນຍັດ

ສິກຂາບົທທີ ໑໐ ຈົບ

ຕຸວັຜຜວັຄທີ ໔ ຈົບ

ໝາຍເຫດ :

໑ ກິກຂຸດີອອກພັນສາແລ້ວ ຍ່າງທາງໄປໄດ້ພຽງ ໓ ໂຍຊນ໌ແລ້ວກັບສຳນັກເດີມໂດຍໃຊ້ເສັ້ນທາງໃຫມ່ ນັບວ່າໄດ້ຫລີກຈາຣິກໄປສິ້ນຣະຍະທາງ ໖ ໂຍຊນ໌ (ກງ໌ຂາ. ອ. ໓໗໓)

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຕສ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໑ ນິທານວັຕຖຸ**

**໕. ຈິຕຕາຄາຣວັຄ**

ຫມວດວ່າດ້ວຍຫໍຈິຕຣກັມ

**ສິກຂາບົທທີ ໑**

ວ່າດ້ວຍການໄປເບິ່ງໂຮງລະຄຣຫລວງ

## ເຣື້ອງກິກສຸຕິຈັພພັຄຄີຍ໌

[໙໗໗] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທຄເຈົ້າປະທັບຢູ່ ໝະ ພຣະເຊຕວັນ ອາຣາມຂອງອນາຖບິຕ ພິກເສດຖີ ເຂຕກຸງສາວັຕຖີ ທີ່ພຣະອາຊອຸທຍານຂອງພຣະເຈົ້າປເສນທິໂກສົລ ມີກາຣສະແດງກາພ ຈິຕຣກັມ ໝະ ຫໍຈິຕຣກັມ ຄັ້ງນັ້ນ ຄົນທັງຫລາຍພາກັນໄປເບິ່ງຫໍຈິຕຣກັມ ແມ່ນພວກກິກສຸຕິ ຈັພພັຄຄີຍ໌ກໍໄປເບິ່ງຫໍຈິຕຣກັມ ຄົນທັງຫລາຍຕໍາຫນິປະນາມ ໂພນທະນາວ່າ "ຈັ່ງໃດພວກກິກສຸຕິ ຈຶ່ງໄປເບິ່ງຫໍຈິຕຣກັມເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂກຄກາມລະ" ກິກສຸຕິທັງຫລາຍໄດ້ຍິນຊາວບ້ານ ຕໍາຫນິ ປະນາມ ໂພນທະນາ ບັນດາກິກສຸຕິຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາ ວ່າ "ຈັ່ງໃດພວກກິກສຸຕິຈຶ່ງໄປເບິ່ງຫໍຈິຕຣກັມລະ" ຄັນແລ້ວ ກິກສຸຕິເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປ ບອກກິກສຸທັງຫລາຍໃຫ້ຊາບ ພວກກິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

## ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລໍາດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກສຸ ທັງຫລາຍວ່າ "ກິກສຸທັງຫລາຍ ຊາບວ່າ ພວກກິກສຸຕິຈັພພັຄຄີຍ໌ໄປເບິ່ງຫໍຈິຕຣກັມ ແມ່ນແທ້ບໍ" ກິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທຄເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທຄເຈົ້າຊົງຕໍາຫນິວ່າ "ຯລຯ ກິກສຸທັງຫລາຍ ຈັ່ງໃດພວກກິກສຸຕິຈັພພັຄຄີຍ໌ຈຶ່ງໄປເບິ່ງຫໍຈິຕຣກັມລະ ກິກສຸທັງຫລາຍ ກາຣກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມ ໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂື້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກສຸຕິທັງຫລາຍຍົກສິກ ຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໗໘] ກໍກິກສຸຕິໃດໄປເບິ່ງໂຮງລະຄຣຫລວງ ຫໍຈິຕຣກັມ ສວນສາລາຣາມ ອຸທຍານຫລືສຣະ ໂບກຂຣຕີ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງກິກສຸຕິຈັພພັຄຄີຍ໌ ຈົບ

## ສິກຂາບົທວິກັງຄ໌

[໙໗໙] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ ຄໍາວ່າ ກິກສຸຕິ ມີອະທິບາຍວ່າ ຊື່ວ່າກິກສຸຕິ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ ວ່າ ກິກສຸຕິ ໃນຄວາມຫມາຍນີ້

ທີ່ຊື່ວ່າ ໂຮງລະຄອນຫລວງ ໄດ້ແກ່ ສຖານທີ່ທີ່ເຂົາສ້າງຂຶ້ນໄວ້ ຓະ ທີ່ໃດທີ່ນຶ່ງເພື່ອຖວາຍພຣະຣາຊາຊົງກີຣາ ເພື່ອໃຫ້ຊົງສຳບາຍພຣະທັຍ
ທີ່ຊື່ວ່າ ຫໍຈິຕຣກັມ ໄດ້ແກ່ ຫອທີ່ສ້າງຂຶ້ນ ຓະ ທີ່ໃດທີ່ນຶ່ງເພື່ອໃຫ້ຄົນທັງຫລາຍຊົມຫລິ້ນ ມ່ອນຊື່ນ
ທີ່ຊື່ວ່າ ສວນສາລາຣຓະ ໄດ້ແກ່ ສວນທີ່ສ້າງຂຶ້ນໃຫ້ຄົນທັງຫລາຍຊຸມຫລິ້ນ ມ່ອນຊື່ນ
ທີ່ຊື່ວ່າ ອຸທຍານ ໄດ້ແກ່ ອຸທຍານທີ່ສ້າງຂຶ້ນ ຓະ ທີ່ໃດທີ່ນຶ່ງເພື່ອໃຫ້ຄົນທັງຫລາຍຊົມຫລິ້ນມ່ອນຊື່ນ
ທີ່ຊື່ວ່າ ສຣະໂບກຂຣຕີ ໄດ້ແກ່ ສະນ້ຳທີ່ຂຸດໄວ້ ຓະ ທີ່ໃດທີ່ນຶ່ງເພື່ອໃຫ້ຄົນທັງຫລາຍຊົມຫລິ້ນມ່ອນຊື່ນ

[໕໗໐] ກິກບຸຕີຍ່າງໄປເພື່ອຈະດູ ຕ້ອງອາບັຕິທຸກກຎ ຢືນເບິ່ງ ຕ້ອງອາບັຕິປາຈິຕຕີຍ໌໑ ພົ້ນສາຍຕາໄປແລ້ວຫລຽວກັບມາດູອີກ ຕ້ອງອາບັຕິປາຈິຕຕີຍ໌ ຍ່າງເພື່ອຈະໄປເບິ່ງແຕ່ລະແຫ່ງ ຕ້ອງອາບັຕິທຸກກຎ ຢືນເບິ່ງ ຕ້ອງອາບັຕິປາຈິຕຕີຍ໌ ພົ້ນສາຍຕາໄປແລ້ວຫລຽວກັບມາດູອີກ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**
໑ ຢືນຢູ່ໃນທີ່ແຫ່ງດຽວ ເບິ່ງດູສຖານທີ່ທັງ ໕ ບ່ອນມີໂຮງລະຄອນຫລວງເປັນຕົ້ນ ໂດຍບໍ່ກ້າວຍ່າງໄປໃສ ຕ້ອງອາບັຕິ
ປາຈິຕຕີຍ໌ ໑ ຕົວ ຖ້າຫັນໄປເບິ່ງດູສຖານທີ່ເຫລົ່ານັ້ນຊຶ່ງຕັ້ງຢູ່ໃນທີ່ຕ່າງໆ ຕ້ອງອາບັຕິປາຈິຕຕີຍ໌ຕາມຈຳນວນສຖານ ທີ່ເບິ່ງດູ (ວິ. ອ. ໔/໕໗໗/໕໐໗)

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຓຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໑ ອນາປັຕຕິວາຣ

### ອນາປັຕຕິວາຣ
ກິກບຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໕໗໑] ໑. ກິກບຸຕີຢືນຢູ່ທີ່ສວນສາລາຣຓະເບິ່ງເຫັນ

໔. ກິກຂຸຕີຍ່າງໄປຍ່າງມາເບິ່ງເຫັນ
໓. ກິກຂຸຕີນິລຸຣະຍ່າງໄປເຫັນ
໔. ກິກຂຸຕີຜູ້ມີເຫດຸຂັດຂ້ອງ
໕. ກິກຂຸຕີວິກົລຈິຕ
໖. ກິກຂຸຕີຕົ້ນບັນຍັດ

ສິກຂາບົທທີ ໑ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັດທ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໔ ນິທານວັຕຖຸ

## ໕. ຈິຕຕາຄາຣວັຄ

### ສິກຂາບົທທີ ໔

ວ່າດ້ວຍການໃຊ້ຕັ່ງຫລືແທ່ນ

### ເຣື້ອງກິກຂຸຕີຫລາຍຮູບ

[໙໗໔] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຕາະ ພຣະເຊຕວັນ ອາຣາມຂອງອນາຖບິຕ ໜິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກຂຸຕີທັງຫລາຍໃຊ້ຕັ່ງຍາວແດ່ ແທ່ນແດ່ ຄົນທັງຫລາຍທຽວຈາຣິກໄປຕາມວິຫາຣເຫັນແລ້ວຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກກິກຂຸຕີຈຶ່ງໃຊ້ຕັ່ງຍາວແດ່ ແທ່ນແດ່ ເໝືອນຍິງຄຣືຫັສຖ໌ຜູ້ບໍຣິໂກຄກາມລະ" ກິກຂຸຕີທັງຫລາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາກິກຂຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມໂພນທະນາວ່າ "ຈັ່ງໃດພວກກິກຂຸຕີຈຶ່ງໃຊ້ຕັ່ງຍາວແດ່ ແທ່ນແດ່ລະ" ຄັນແລ້ວ ກິກຂຸຕີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫດຸ ຊົງສອບຖາມກິກຂຸທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ພວກກິກຂຸຕີໃຊ້ຕັ່ງຍາວແດ່ ແທ່ນແດ່ ແມ່ນແທ້ບໍ"

ກິກບຸນັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທລເຈົ້າຊົງຕຳຫນິວ່າ "ຯລຯ ກິກບຸນັງຫລາຍ ຈັ່ງໃດພວກກິກບຸນີຈຶ່ງໃຊ້ຕຽງແດ່ ຕັ່ງແດ່ລະ ກິກບຸນັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກບຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໙໗໓] ກໍກິກບຸນີໃດໃຊ້ຕັ່ງຍາວຫລືແທ່ນ ຕ້ອງອາບັຕິປາຈິຕຕິຍ໌

ເຣື້ອງກິກບຸນີຫລາຍຮູບ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕທ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໔ ອນາປັຕຕິວາຣ**

**ສິກຂາບົທວິກັງຄ໌**

[໙໗໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ
ຄຳວ່າ ກິກບຸນີ ມີອະທິບາຍວ່າ ຊື່ວ່າກິກບຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກບຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ຕັ່ງຍາວ ພຣະຜູ້ມີພຣະກາຄຕຣັສຫມາຍເຖິງຕັ່ງທີ່ເກີນຂນາດ
ທີ່ຊື່ວ່າ ແທ່ນ ໄດ້ແກ່ ແທ່ນທີ່ຖັກດ້ວຍຂົນສັຕວ໌ທີ່ຕົນຫາມາ
ຄຳວ່າ ໃຊ້ ຄື ນັ່ງຫລືນອນເທິງຕັ່ງຍາວ ຫລືເທິງແທ່ນນັ້ນ ຕ້ອງອາບັຕິປາຈິຕຕິຍ໌

**ອນາປັຕຕິວາຣ**

ກິກບຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໙໗໕] ໑. ກິກບຸນີຕັດຕີນຕັ່ງຍາວແລ້ວຈຶ່ງໃຊ້
໒. ກິກບຸນີຣື້ອຂົນສັຕວ໌ຂອງແທ່ນແລ້ວຈຶ່ງໃຊ້
໓. ກິກບຸນີວິກົລຈິຕ
໔. ກິກບຸນີຕົ້ນບັນຍັດ

ສິກຂາບົທທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັດທ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໑ ພຣະບັນຍັດ**

**໕. ຈິຕຕາຄາຣວັຄ**

**ສິກຂາບົທທີ ໑**

ວ່າດ້ວຍການຟ້ອນ

**ເຣື່ອງພິກຂຸນີຈັພພັຄຄີຍ໌**

[໕໗໖] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທສເຈົ້າປະທັບຢູ່ ທີ່ ພຣະເຊຕວັນ ອາຣາມຂອງອນາຖບິດິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ພວກພິກຂຸນີຈັພພັຄຄີຍ໌ກໍ້ຟ້ອນຢູ່ ຄົນທັງຫລາຍທ່ຽວຈາຣິກໄປຕາມວິຫາຣເຫັນແລ້ວຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸນີຈັພພັຄຄີຍ໌ຈຶ່ງກໍ້ຟ້ອນເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກຂຸນີທັງຫລາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸນີຈັພພັຄຄີຍ໌ຈຶ່ງກໍ້ຟ້ອນລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພວກພິກຂຸນີຈັພພັຄຄີຍ໌ກໍ້ຟ້ອນແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພວກພິກຂຸນີຈັພພັຄຄີຍ໌ຈຶ່ງກໍ້ຟ້ອນລະ ພິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໘໗໗] ກໍກີກບຸດີໃດກໍ້ດ້າຍ ຕ້ອງອາບັດີປາຈິດຕີຍ໌

ເຣື້ອງກີກບຸດີຈັພພັຄຄີຍ໌ ຈົບ

## ພຣະວິນັຍປິດົກ ກີກຂຸນີວີກັງຄ໌ [໔. ປາຈິຕຕີຍກັຕຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໓ ອນາປັຕຕິວາຣ

**ສິກຂາບົທວີກັງຄ໌**

[໘໗໘] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ ຄຳວ່າ ກີກບຸດີ ມີອະທິບາຍວ່າ ຊື່ວ່າກີກບຸດີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກີກບຸດີ ໃນຄວາມໝາຍນີ້

ທີ່ຊື່ວ່າ ດ້າຍ ໄດ້ແກ່ດ້າຍ ໖ ຊນິດ ຄື ດ້າຍເປືອກໄມ້ ດ້າຍຝ້າຍ ດ້າຍໄໝດ້າຍຂົນສັຕວ໌ ດ້າຍປ່ານ ດ້າຍທີ່ໃຊ້ວັຕຖຸເຈືອກັນ

ຄຳວ່າ ກໍ້ ຄື ກໍ້ເອງ ຕ້ອງອາບັດີທຸກກຝໃນຂຕະທີ່ກໍ້ ຕ້ອງອາບັດີປາຈິຕຕີຍ໌ ທຸກໆຂຕະທີ່ມ້ວນເຂົ້າມາ

**ອນາປັຕຕິວາຣ**

ກີກບຸດີຕໍ່ໄປນີ້ບໍ່ຕ້ອງອາບັດີ ຄື

[໘໗໙] ໑. ກີກບຸດີ ກໍ້ດ້າຍທີ່ຜູ້ອື່ນກໍ້ໄວ້

໔. ກີກບຸດີວິກົລຈິຕ

໓. ກີກບຸດີຕົ້ນບັນຍັດ

ສິກຂາບົທທີ ໓ ຈົບ

## ພຣະວິນັຍປິດົກ ກີກຂຸນີວີກັງຄ໌ [໔. ປາຈິຕຕີຍກັຕຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໔ ນິທານວັຕຖຸ

**໕. ຈິຕຕາຄາຣວັຄ**

## ສິກຂາບົທທີ ໔

ວ່າດ້ວຍການຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌

## ເຣື້ອງກິກຂຸນີຫລາຍຣູບ

[໑໑໐] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິຓ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກກິກຂຸນີຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌ ບັນດາ ກິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມໂພນທະນາວ່າ "ຈັ່ງໃດພວກກິກຂຸນີຈຶ່ງຊ່ວຍທຳ ການຂົນຂວາຍເພື່ອຄຣືຫັສຖ໌ລະ" ຄັນແລ້ວກິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກຂຸທັງຫລາຍ ໃຫ້ຊາບ ພວກກິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

## ຊົງປະຊຸມສົງຆ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະກາຄຣັບສັ່ງໃຫ້ປະຊຸມສົງຆ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸ ທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ພວກກິກຂຸນີຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌ ແມ່ນ ແທ້ບໍ່" ກິກຂຸທັງຫລາຍທູລຣັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທລເຈົ້າຊົງ ຕຳໜິວ່າ "ຯລຯ ກິກຂຸທັງຫລາຍ ຈັ່ງໃດພວກກິກຂຸນີຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌ລະ ກິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດ ໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຣັບສັ່ງໃຫ້ກິກຂຸທັງ ຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໑] ກໍກິກຂຸນີໃດຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງກິກຂຸນີຫລາຍຣູບ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຓຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໔ ອນາ ປັຕຕິວາຣ

## ສິກຂາບົທວິກັງຄ໌

[໑໑໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ກິກຂຸນີ ມີອະທິບາຍວ່າ ຊື່ວ່າກິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌ ຄື ຕົ້ມເຂົ້າຕົ້ມ ຫຸງກັຕຕາຫານຫລືທຳຂອງຄ້ຽວ ຊັກຜ້ານຸ່ງຫລືຜ້າໂພກເພື່ອຄຣືຫັສຖ໌ ຕ້ອງອາບັຕິປາຈິຕຕິຍ໌

**ອນາປັຕຕິວາຣ**

ກິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໙໓] ໑. ກິກຂຸນີຕົ້ມເຂົ້າປຽກ ຈັດນໍ້າປານະຖວາຍສົງຄ໌

໒. ກິກຂຸນີຫຸງເຂົ້າຖວາຍສົງຄ໌

໓. ກິກຂຸນີທຳການບູຊາເຈດີຍ໌

໔. ກິກຂຸນີຕົ້ມເຂົ້າປຽກ ຫຸງກັຕຕາຫານຫລືທຳຂອງຄ້ຽວ ຊັກຜ້ານຸ່ງຜ້າຫົ່ມຫລືຜ້າໂພກໃຫ້ໄວຍາວັຈກອນຂອງຕົນ

໕. ກິກຂຸນີວິກົລຈິຕ

໖. ກິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໔ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໕ ນິທານວັຕຖຸ**

**໕. ຈິຕຕາຄາຣວັຄ**

**ສິກຂາບົທທີ ໕**

ວ່າດ້ວຍການບໍ່ຊ່ວຍຣະງັບອທິກຣຕ໌(ບັນຫາຂອງສົງຄ໌)

**ເຣື້ອງກິກຂຸນີຖຸລລນັນທາ**

[໙໙໔] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຕາ ພຣະເຊຕວັນ ອາຮາມຂອງອນາຖບິຕທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກຂຸນີຮູບນຶ່ງເຂົ້າໄປຫາກິກຂຸນີຖຸລລນັນທາກ່າວວ່າ "ແມ່ເຈົ້າ

ໄປຣດມາຊ່ອຍຣະງັບອທິກຣຕ໌(ບັນຫາຂອງສົງຄ໌)ນີ້ດ້ວຍເຖີດ" ພິກຂຸນີຖຸລລນັນທາຮັບປາກແຕ່ບໍ່ຊ່ອຍຣະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍຣະງັບ ລຳດັບນັ້ນ ພິກຂຸນີນັ້ນໄດ້ບອກເຣື້ອງນີ້ໃຫ້ພິກຂຸນີທັງຫລາຍຊາບບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລນັນທາອັນພິກຂຸນີຂໍຮ້ອງຢູ່ວ່າ 'ແມ່ເຈົ້າໄປຣດມາຊ່ອຍຣະງັບອທິກຣຕ໌(ບັນຫາຂອງສົງຄ໌)ນີ້ດ້ວຍເຖີດ' ຮັບປາກແລ້ວແຕ່ບໍ່ຊ່ອຍຣະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍຣະງັບລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

## ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີຖຸລລນັນທາອັນພິກຂຸນີຂໍຮ້ອງຢູ່ວ່າ 'ແມ່ເຈົ້າໄປຣດມາຊ່ອຍຣະງັບອທິກຣຕ໌(ບັນຫາຂອງສົງຄ໌)ນີ້ດ້ວຍເຖີດ' ຮັບປາກແລ້ວແຕ່ບໍ່ຊ່ອຍຣະງັບບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍຣະງັບ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທລເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີຖຸລລນັນທາ ອັນພິກຂຸນີຂໍຮ້ອງຢູ່ວ່າ 'ແມ່ເຈົ້າໄປຣດມາຊ່ອຍຣະງັບອທິກຣຕ໌(ບັນຫາຂອງສົງຄ໌)ນີ້ດ້ວຍເຖີດ' ຮັບປາກແລ້ວແຕ່ບໍ່ຊ່ອຍຣະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍຣະງັບລະ ພິກຂຸທັງຫລາຍ ການກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໕] ກໍພິກຂຸນີໃດອັນພິກຂຸນີຂໍຮ້ອງຢູ່ວ່າ 'ແມ່ເຈົ້າໄປຣດມາຊ່ອຍຣະງັບອທິກຣຕ໌(ບັນຫາຂອງສົງຄ໌)ນີ້ດ້ວຍເຖີດ' ຮັບປາກແລ້ວ ພາຍຫລັງພິກຂຸນີນັ້ນຜູ້ບໍ່ມີອັນຕຣາຍ ບໍ່ຊ່ອຍຣະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍຣະງັບ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກຂຸນີຖຸລລນັນທາ ຈົບ

## ສິກຂາບົທວິພັງຄ໌

[໑໑໖] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ ເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ອັນພິກຂຸນີ ຄື ພິກຂຸນີຮູບອື່ນ

ທີ່ຊື່ວ່າ ອະທິກອນ(ບັນຫາຂອງສົງຄ໌) ໄດ້ແກ່ ອະທິກອນ(ບັນຫາຂອງສົງຄ໌) ໔ ຢ່າງ໑ ຄື (໑) ວິວາທາທິກອນ (໒) ອນຸວາທາທິກອນ (໓) ອາປັຕຕາທິກອນ (໔) ກິຈຈາທິກອນ

ຄຳວ່າ ແມ່ເຈົ້າໄປຣດມາຊ່ວຍຣະງັບອະທິກອນ(ບັນຫາຂອງສົງຄ໌)ນີ້ດ້ວຍເຖີດ ຄວາມວ່າ ເຊີນແມ່ເຈົ້າໄປຊ່ວຍວິນິຈສັຍຄດີນີ້ດ້ວຍເຖີດ

ຄຳວ່າ ພາຍຫລັງພິກຂຸນີນັ້ນຜູ້ບໍ່ມີອັນຕຣາຍ ຄື ເມື່ອບໍ່ມີອັນຕຣາຍ

ຄຳວ່າ ບໍ່ຊ່ວຍຣະງັບ ຄື ບໍ່ຣະງັບດ້ວຍຕົນເອງ

ຄຳວ່າ ບໍ່ຂົນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບ ຄື ບໍ່ສັ່ງຜູ້ອື່ນ ເມື່ອທອດທຸຣະວ່າ "ເຮົາຈັກບໍ່ຣະງັບ ຈັກບໍ່ຂົນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບ" ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ອະທິກອນ(ບັນຫາຂອງສົງຄ໌) ໔ ຢ່າງ ຄື

໑. ວິວາທາທິກອນ ໄດ້ແກ່ ການຖຽງກັນວ່າ ນີ້ເປັນທັມວິນັຍ ນີ້ບໍ່ແມ່ນທັມວິນັຍເປັນຕົ້ນ ໒. ອນຸວາທາທິກອນ ໄດ້ແກ່ ການໂຈທກັນດ້ວຍສີລວິບັຕິ ອາຈາຣວິບັຕິ ທິຕຖິວິບັຕິ ຫລືອາຊີວວິບັຕິ ໓. ອາປັຕຕາທິກອນ ໄດ້ແກ່ ການຕ້ອງອາບັຕິ ການປັບອາບັຕິແລະແກ້ຕ່າງໆໃຫ້ພົ້ນອາບັຕິ ໔. ກິຈຈາທິກອນ ໄດ້ແກ່ ກິຈທຸຣະຂອງສົງຄ໌ ເຊັ່ນ ອປໂລກນກັມ ຍັຕຕິກັມ ຍັຕຕິທຸຕິຍກັມ ຍັຕຕິຈຕຸຕຖກັມ ມີການສວດປາຕິໂມກຂ໌ເປັນຕົ້ນ (ດູ ວິ. ປ. ໗/໓໔໗-໔໙໑/໔໔໔-໔໔໕)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕທ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໕ ອນາປັຕຕິວາຣ

### ບົທພາຊນີຍ໌

### ຕິກປາຈິຕຕີຍ໌

[໑໙໗] ອຸປສັມບັນ ພິກຂຸນີສຳຄັນວ່າເປັນອຸປສັມບັນ ບໍ່ຊ່ວຍຣະງັບ ບໍ່ຂົນຂວາຍໃຫ້ຜູ້ອື່ນຊ່ວຍ

ຣະງັບອະທິກຣົນ(ບັນຫາຂອງສົງຄ໌) ຕ້ອງອາບັດປາຈິດຕີຍ໌
ອຸປສັມບັນ ພິກສຸດີບໍ່ແນ່ໃຈ ບໍ່ຊ່ວຍຣະງັບ ບໍ່ຂົນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບອະທິກຣົນ(ບັນຫາຂອງສົງຄ໌) ຕ້ອງອາບັດປາຈິດຕີຍ໌
ອຸປສັມບັນ ພິກສຸດີສຳຄັນວ່າເປັນອນຸປສັມບັນ ບໍ່ຊ່ວຍຣະງັບ ບໍ່ຂົນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບອະທິກຣົນ(ບັນຫາຂອງສົງຄ໌) ຕ້ອງອາບັດປາຈິດຕີຍ໌

**ທຸກກົດ**

ພິກສຸດີບໍ່ຊ່ວຍຣະງັບ ບໍ່ຂົນຂວາຍເພື່ອການຣະງັບອະທິກຣົນ(ບັນຫາຂອງສົງຄ໌)ຂອງອນຸປສັມບັນ ຕ້ອງອາບັດທຸກກົດ
ອນຸປສັມບັນ ພິກສຸດີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັດທຸກກົດ
ອນຸປສັມບັນ ພິກສຸດີບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ອນຸປສັມບັນ ພິກສຸດີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັດທຸກກົດ

**ອນາປັດຕິວາຣ**

ພິກສຸດີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື
[໕໕໖] ໑. ພິກສຸດີບໍ່ຣະງັບໃນເມື່ອມີອັນຕຣາຍ
໒. ພິກສຸດີແສວງຫາ(ຄຕະຜູ້ວິນິຈສັຍອະທິກຣົນ(ບັນຫາຂອງສົງຄ໌))ບໍ່ໄດ້
໓. ພິກສຸດີຜູ້ເປັນໄຂ້
໔. ພິກສຸດີຜູ້ມີເຫຕຸຂັດຂ້ອງ
໕. ພິກສຸດີວິກົລຈິຕ
໖. ພິກສຸດີຕົ້ນບັນຍັດ
ສິກຂາບົທທີ ໕ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິດຕີຍກັນທ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໖ ນິທານວັຕຖຸ**

**໕. ຈິຕຕາຄາຣວັຄ**

**ສິກຂາບົທທີ ໓໑**

ວ່າດ້ວຍການໃຫ້ຂອງຄ້ຽວຂອງຈັນແກ່ນັກຟ້ອນເປັນຕົ້ນ

**ເລື້ອງກິກຂຸຕີຖຸລລນັນທາ**

[໓໙໓] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທຂເຈົ້າປະທັບຢູ່ ຕາະ ພຣະເຊຕວັນ ອາຮາມຂອງອນາຖບິດາ ຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກຂຸຕີຖຸລລນັນທາໃຫ້ຂອງຄ້ຽວຂອງຈັນດ້ວຍມືຕນແກ່ພວກ ຄຣູນັກຟ້ອນແດ່ ພວກນັກຟ້ອນແດ່ ພວກໂຕນໄມ້ຄ້ຳແດ່ ພວກມາຍາກລແດ່ ພວກຕີກອງແດ່ ກ່າວວ່າ "ພວກທ່ານຈົ່ງກ່າວພັຕນາຄຸຕຂອງຂະນ້ອຍໃນທີ່ຊຸມນຸມຊົນ" ພວກຄຣູນັກຟ້ອນແດ່ ພວກ ນັກຟ້ອນແດ່ ພວກໂຕນໄມ້ຄ້ຳແດ່ ພວກມາຍາກລແດ່ ພວກຕີກອງແດ່ ຕ່າງພາກັນກ່າວພັຕນາຄຸຕ ຂອງກິກຂຸຕີຖຸລລນັນທາໃນຊຸມນຸມຊົນວ່າ "ກິກຂຸຕີຖຸລລນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວລັມມີກຖາ ພວກທ່ານຈົ່ງຖວາຍ ຈົ່ງກະທຳ(ສັກກາຣະ)ແກ່ທ່ານ" ບັນດາກິກຂຸຕີຜູ້ມັກ ນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລນັນທາຈຶ່ງໃຫ້ຂອງຄ້ຽວ ຂອງຈັນດ້ວຍມືຕນແກ່ຊາວບ້ານລະ" ຄັນແລ້ວກິກຂຸຕີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກກິກຂຸທັງ ຫລາຍໃຫ້ຊາບ ພວກກິກຂຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງฆ์ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງฆ์ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸ ທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ກິກຂຸຕີຖຸລລນັນທາໃຫ້ຂອງຄ້ຽວຂອງຈັນດ້ວຍມືຕນແກ່ ຊາວບ້ານ ແມ່ນແທ້ບໍ່" ກິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທຂເຈົ້າຂ້າ" ພຣະຜູ້ມີພຣະກາຄ ພຸທຂເຈົ້າຊົງຕຳຫນິວ່າ "ຯລຯ ກິກຂຸທັງຫລາຍ ຈັ່ງໃດກິກຂຸຕີຖຸລລນັນທາຈຶ່ງໃຫ້ຂອງຄ້ຽວຂອງ ຈັນດ້ວຍມືຕນແກ່ຊາວບ້ານລະ ກິກຂຸທັງຫລາຍ ການກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມ ໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຂຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕฑ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໓໑ ອນາ ປັຕຕິວາຣ**

**ພຣະບັນຍັດ**

[໑໐໐໐] ກໍພິກບຸຕີໃດໃຫ້ຂອງຄ້ຽວຫລືຂອງຈັນດ້ວຍມືຕົນແກ່ຊາວບ້ານ ແກ່ປຣິພາຊົກ ຫລືແກ່ປຣິພາຊິກາ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກບຸຕີຖຸລລນັນທາ ຈົບ

**ສິກຂາບົທວິກັງຄ໌**

[໑໐໐໑] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະການຄຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກບຸຕີ ມີອະທິບາຍວ່າ ຊື່ວ່າພິກບຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະການຄຊົງປະສົງຄ໌ເອົາວ່າ ພິກບຸຕີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຊາວບ້ານ ໄດ້ແກ່ ບຸຄຄົລຜູ້ໃດຜູ້ນຶ່ງທີ່ຢູ່ຄອງເຮືອນ

ທີ່ຊື່ວ່າ ປຣິພາຊົກ ໄດ້ແກ່ ນັກບວຊຊາຍຄົນໃດຄົນນຶ່ງຜູ້ຢູ່ໃນລັທທິປຣິພາຊົກ ຍົກເວັ້ນພິກບຸແລະສາມເນຣ

ທີ່ຊື່ວ່າ ປຣິພາຊິກາ ໄດ້ແກ່ ນັກບວຊຍິງຄົນໃດຄົນນຶ່ງຜູ້ຢູ່ໃນລັທທິປຣິພາຊິກາ ຍົກເວັ້ນພິກບຸຕີ ສິກຂມານາ ແລະສາມເນຣີ

ທີ່ຊື່ວ່າ ຂອງຄ້ຽວ ໄດ້ແກ່ ເວັ້ນໂພຊນະ ໕ ນ້ຳແລະໄມ້ສີຟັນ ທີ່ເຫລືອຊື່ວ່າ ຂອງຄ້ຽວ

ທີ່ຊື່ວ່າ ຂອງຈັນ ໄດ້ແກ່ ໂພຊນະ ໕ ຢ່າງ ຄື ເຂົ້າສຸກ ຂນົມສດ ເຂົ້າຕູ ປາ ຊີ້ນ

ຄຳວ່າ ໃຫ້ ຄື ໃຫ້ດ້ວຍກາຍ ດ້ວຍຂອງເນື່ອງດ້ວຍກາຍ ຫລືດ້ວຍການໂຍນໃຫ້ ຕ້ອງອາບັຕິປາຈິຕຕີຍ໌ ໃຫ້ນ້ຳແລະໄມ້ສີຟັນ ຕ້ອງອາບັຕິທຸກກົຏ

**ອນາປັຕຕິວາຣ**

ພິກບຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໐໒] ໑. ພິກບຸຕີໃຊ້ໃຫ້ຜູ້ອື່ນໃຫ້

໒. ພິກບຸຕີບໍ່ໄດ້ໃຫ້ເອງ

໓. ພິກບຸຕີໃຫ້ໂດຍວາງໄວ້ໃກ້ໆ

໔. ພິກບຸຕີໃຫ້ຂອງໄລ້ທາພາຍນອກ

໕. ພິກສຸຕີວິກົລຈິຕ
໖. ພິກສຸຕີຕົ້ນບັນຍັດ

ສິກຂາບົທທີ ໖ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໗ ນິທານວັຕຖຸ

## ໕. ຈິຕຕາຄາຣວັຄ

### ສິກຂາບົທທີ ໗

ວ່າດ້ວຍການໃຊ້ຜ້າຊັບຣະດູແລ້ວບໍ່ສລະ

### ເຣື້ອງພິກສຸຕີຖຸລລນັນທາ

[໑໐໐໖] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທສເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຮາມຂອງອນາຖບິຓຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸຕີຖຸລລນັນທາໃຊ້ຜ້າຊັບຣະດູຄົນດຽວບໍ່ຍອມສລະ ພິກສຸຕີອື່ນທີ່ມີປະຈຳເດືອນບໍ່ມີໂອກາສໄດ້ໃຊ້ ພິກສຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລນັນທາຈຶ່ງໃຊ້ຜ້າຊັບຣະດູບໍ່ຍອມສລະລະ" ຄັນແລ້ວ ພິກສຸຕີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸຕີຖຸລລນັນທາໃຊ້ຜ້າຊັບຣະດູບໍ່ຍອມສລະ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທສເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸຕີຖຸລລນັນທາຈຶ່ງໃຊ້ຜ້າຊັບຣະດູບໍ່ຍອມສລະລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດ

ໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໐໔] ກໍກິກສຸນີໃດໃຊ້ຜ້າຊັບຣະດູແລ້ວບໍ່ຍອມສລະ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງກິກສຸນີຖຸລລນັນທາ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຕທ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໆ ອນາປັຕຕິວາຣ

**ສິກຂາບົທວິກັງຄ໌**

[໑໐໐໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ກິກສຸນີ ມີອະທິບາຍວ່າ ຊື່ວ່າກິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຜ້າຊັບຣະດູ ໄດ້ແກ່ ຜ້າທີ່ເຂົາຖວາຍໄວ້ໃຫ້ກິກສຸນີຜູ້ມີປະຈຳເດືອນໃຊ້

ຄຳວ່າ ບໍ່ຍອມສລະ ຄື ໃຊ້ ໒-໓ ຄືນແລ້ວ ຊັກໃນວັນທີ ໔ ຍັງໃຊ້ອີກ ບໍ່ຍອມສລະໃຫ້ແກ່ກິກສຸນີ ສິກຂມານາ ຫລືສາມເນຣີຮູບອື່ນ ຕ້ອງອາບັຕິປາຈິຕຕີຍ໌

**ບົທກາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໐໖] ຜ້າທີ່ຍັງບໍ່ສລະ ກິກສຸນີສຳຄັນວ່າຍັງບໍ່ສລະ ໃຊ້ ຕ້ອງອາບັຕິປາຈິຕຕີຍ໌

ຜ້າທີ່ຍັງບໍ່ສລະ ກິກສຸນີບໍ່ແນ່ໃຈ ໃຊ້ ຕ້ອງອາບັຕິປາຈິຕຕີຍ໌

ຜ້າທີ່ຍັງບໍ່ສລະ ກິກສຸນີສຳຄັນວ່າສລະແລ້ວ ໃຊ້ ຕ້ອງອາບັຕິປາຈິຕຕີຍ໌

**ທຸກທຸກກຸ**

ຜ້າທີ່ສລະແລ້ວ ກິກສຸນີສຳຄັນວ່າຍັງບໍ່ສລະ ໃຊ້ ຕ້ອງອາບັຕິທຸກກຸ

ຜ້າທີ່ສລະແລ້ວ ກິກບຸຕີສົງສັຍ ໃຊ້ ຕ້ອງອາບັຕິທຸກກຕ
ຜ້າທີ່ສລະແລ້ວ ກິກບຸຕີສຳຄັນວ່າສລະແລ້ວ ໃຊ້ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**
ກິກບຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໐໐໗] ໑. ກິກບຸຕີໃຊ້ສອຍແລ້ວສລະ
໒. ກິກບຸຕີໃຊ້ຜ້າທີ່ສລະແລ້ວອີກ
໓. ກິກບຸຕີໃຊ້ສອຍໃນເມື່ອບໍ່ມີກິກບຸຕີອື່ນຜູ້ມີປະຈຳເດືອນ
໔. ກິກບຸຕີຖືກແຍ່ງຊີງຜ້າເອົາໄປ
໕. ກິກບຸຕີຜ້າຫາຍ
໖. ກິກບຸຕີຜູ້ມີເຫຕຸຂັດຂ້ອງ
໗. ກິກບຸຕີວິກົລຈິຕ
໘. ກິກບຸຕີຕົ້ນບັນຍັດ

ສິກຂາບົທທີ ໗ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໘ ນິທານວັຕຖຸ**

**໕. ຈິຕຕາຄາຣວັຄ**

**ສິກຂາບົທທີ ໘**
ວ່າດ້ວຍການບໍ່ສລະທີ່ພັກ

**ເຣື້ອງກິກບຸຕີຖຸລລນັນທາ**
[໑໐໐໘] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຕະ ພຣະເຊຕວັນ ອາຣາມຂອງອນາຖບິຕທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກບຸຕີຖຸລລນັນທາບໍ່ສລະທີ່ພັກແລ້ວຫລີກຈາຣິກໄປ ຕໍ່ມາທີ່ພັກນັ້ນຖືກໄຟໄຫມ້ ກິກບຸຕີທັງຫລາຍກ່າວຢ່າງນີ້ວ່າ “ແມ່ເຈົ້າ ພວກເຮົາຈົ່ງຊ່ວຍກັນຂົນຂອງ

ອອກມາ" ກິກບຸຕີບາງພວກກ່າວຢ່າງນີ້ວ່າ "ແມ່ເຈົ້າ ພວກຂະນ້ອຍບໍ່ຂົນຂອງອອກມາ ສິ່ງໃດສິ່ງນຶ່ງສູນຫາຍໄປ ແມ່ເຈົ້າຈັກທວງພວກຂະນ້ອຍ" ເມື່ອກິກບຸຕີຖຸລລນັນທາກັບມາສູ່ທີ່ພັກນັ້ນອີກ ຖາມກິກບຸຕີທັງຫລາຍວ່າ "ແມ່ເຈົ້າ ພວກທ່ານຊ່ອຍຂົນຂອງອອກແດ່ຫລືບໍ່" ກິກບຸຕີຕອບວ່າ "ແມ່ເຈົ້າ ພວກຂະນ້ອຍບໍ່ໄດ້ຊ່ອຍຂົນ" ກິກບຸຕີຖຸລລນັນທາຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກກິກບຸຕີ ເມື່ອທີ່ພັກຖືກໄຟໄຫມ້ ຈຶ່ງບໍ່ຊ່ອຍກັນຂົນຂອງອອກມາລະ" ບັນດາກິກບຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລນັນທາ ບໍ່ສລະທີ່ພັກແລ້ວຫລີກຈາຣິກໄປລະ" ຄັນແລ້ວ ກິກບຸຕີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກບຸທັງຫລາຍໃຫ້ຊາບ ພວກກິກບຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

## ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫດ ຊົງສອບຖາມກິກບຸທັງຫລາຍວ່າ "ກິກບຸທັງຫລາຍ ຂາບວ່າ ກິກບຸຕີຖຸລລນັນທາບໍ່ສລະທີ່ພັກແລ້ວຫລີກຈາຣິກໄປແມ່ນແທ້ບໍ" ກິກບຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳຫນິວ່າ "ຯລຯ ກິກບຸທັງຫລາຍ ຈັ່ງໃດກິກບຸຕີຖຸລລນັນທາບໍ່ສລະທີ່ພັກແລ້ວຫລີກຈາຣິກໄປລະ ກິກບຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກບຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໐໙] ກໍກິກບຸຕີໃດບໍ່ສລະທີ່ພັກແລ້ວຫລີກຈາຣິກໄປ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງກິກບຸຕີຖຸລລນັນທາ ຈົບ

## ສິກຂາບົທວິກັງຄ໌

[໑໐໑໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ

ຄຳວ່າ ກິກບຸຕີ ມີອະທິບາຍວ່າ ຊື່ວ່າກິກບຸຕີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ວ່າ ກິກບຸຕີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ທີ່ພັກ ພຣະຜູ້ມີພຣະກາຄຕຣັສຫມາຍເຖິງທີ່ພັກທີ່ຕິດບານປະຕູ

ຄຳວ່າ ບໍ່ສລະ . . . ຫລີກຈາຣິກໄປ ຄວາມວ່າ ບໍ່ສລະແກ່ກິກຂຸນີ ສິກຂມານາຫລືສາມເນຣີ ເມື່ອຢ່າງພື້ນເຂດທີ່ພັກມີຮົ້ວລ້ອມ ຕ້ອງອາບັຕິປາຈິຕຕີຍ໌ ຢ່າງພື້ນບໍຣິເວດທີ່ພັກທີ່ບໍ່ມີຮົ້ວລ້ອມ ຕ້ອງອາບັຕິປາຈິຕຕີຍ໌

**ບົທກາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໑໑] ທີ່ພັກທີ່ຍັງບໍ່ສລະ ກິກຂຸນີສຳຄັນວ່າຍັງບໍ່ໄດ້ສລະ ຫລີກໄປ ຕ້ອງອາບັຕິປາຈິຕຕີຍ໌
ທີ່ພັກທີ່ຍັງບໍ່ສລະ ກິກຂຸນີບໍ່ແນ່ໃຈ ຫລີກໄປ ຕ້ອງອາບັຕິປາຈິຕຕີຍ໌
ທີ່ພັກທີ່ຍັງບໍ່ສລະ ກິກຂຸນີສຳຄັນວ່າສລະແລ້ວ ຫລີກໄປ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຓຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໗ ອນາປັຕຕິວາຣ**

**ຕິກທຸກກຍ**

ກິກຂຸນີບໍ່ສລະຫ້ອງພັກບໍ່ໄດ້ຕິດປະຕູ ຫລີກໄປ ຕ້ອງອາບັຕິທຸກກຍ
ທີ່ພັກທີ່ສລະແລ້ວ ກິກຂຸນີສຳຄັນວ່າຍັງບໍ່ສລະ ຫລີກໄປ ຕ້ອງອາບັຕິທຸກກຍ
ທີ່ພັກທີ່ສລະແລ້ວ ກິກຂຸນີບໍ່ແນ່ໃຈ ຫລີກໄປ ຕ້ອງອາບັຕິທຸກກຍ
ທີ່ພັກທີ່ສລະແລ້ວ ກິກຂຸນີສຳຄັນວ່າສລະແລ້ວ ຫລີກໄປ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ກິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໑໔] ໑. ກິກຂຸນີສລະແລ້ວຫລີກໄປ

໒. ກິກຂຸນີຫລີກໄປເມື່ອມີອັນຕຣາຍ

໓. ກິກຂຸນີແສວງຫາ(ຜູ້ເບິ່ງແຍງແທນ)ແລ້ວບໍ່ໄດ້

໔. ກິກຂຸນີຜູ້ເປັນໄຂ້

໕. ກິກຂຸນີຜູ້ມີເຫຕຸຂັດຂ້ອງ

ຝ. ກິກຂຸຕີວິກົລຈິຕ
ຖ. ກິກຂຸຕີຕົ້ນບັນຍັດ

ສິກຂາບົທທີ ໗ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕທ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໙ ນິທານວັຕຖຸ

## ໕. ຈິຕຕາຄາຣວັຄ

### ສິກຂາບົທທີ ໙

ວ່າດ້ວຍການຮຽນເດັຽຣະສານວິຊາ

### ເຣື້ອງກິກຂຸຕີຈັພພັຄຄີຍ໌

[໑໐໑໓] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທສເຈົ້າປະທັບຢູ່ ຕະ ພຣະເຊຕວັນ ອາຮາມຂອງອນາຖບິຕທີກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກກິກຂຸຕີຈັພພັຄຄີຍ໌ຮຽນເດັຽຣະສານວິຊາ໑ ຊາວບ້ານຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດກິກຂຸຕີຈຶ່ງຮຽນເດັຽຣະສານວິຊາເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂກຄກາມລະ" ກິກຂຸຕີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳຫນິ ປະນາມ ໂພນທະນາ ບັນດາກິກຂຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກກິກຂຸຕີຈັພພັຄຄີຍ໌ຈຶ່ງຮຽນເດັຽຣະສານວິຊາລະ" ຄັນແລ້ວ ກິກຂຸຕີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ພວກກິກຂຸຕີຈັພພັຄຄີຍ໌ຮຽນ

**ໝາຍເຫດ :**

໑ ໃນວິນັຍປິດົກນີ້ ເດັຽຣະສານວິຊາ ຄືວິຊາທີ່ບໍ່ມີປໂຍດ ບໍ່ກ່ຽວຂ້ອງກັບພຣະພຸທສສາສນາ ເປັນ

ວິຊາທີ່ບຽດບຽນຜູ້ອື່ນ ເຊັ່ນ (໑) ວິຊາຝຶກຊ້າງ, ຂີ່ຊ້າງ (໒) ວິຊາຝຶກມ້າ, ຂີ່ມ້າ (໓) ວິຊາການຂັບລົດ (໔) ວິຊາຍິງສນູ (໕) ວິຊາຟັນດາບ (໖) ຮ່າຍມນຕຣ໌ທຳຮ້າຍຜູ້ອື່ນດ້ວຍພິທີອາຖຣຣພຕ໌ (໗) ຮ່າຍມນຕຣ໌ເສກຕະປູຝັງດິນຂ້າຄົນຫລືເສກເຂົ້າທ້ອງ (໘) ຮ່າຍມນຕຣ໌ທຳຜູ້ອື່ນໃຫ້ຢູ່ໃນອຳນາຈຫລືໃຫ້ເປັນບ້າ (໙) ຮ່າຍມນຕຣ໌ທຳຜູ້ອື່ນໃຫ້ເນື້ອເລືອດເຫືອດແຫ້ງ (໑໐) ປ່ອຍສັຕວ໌ມີພິษ (ວິ. ອ. ໒/໑໐໑໕/໕໑໑, ກງິຂາ. ອ. ໓໘໘, ສາຣຕຖທີກາ ໓/໑໐໑໕/໑໕໕, ກງິຂາ. ຜີກາ ໕໐໓, ປາຈິຕິຍາທີໂຍຊນາ ໑໗໓ ມ. ) ສ່ວນໃນພຣະສູຕຣ ຫມາຍເຖິງການທຳນາຍອວັຍວະ ທຳນາຍຕຳຫນິ ທຳນາຍໂຊຄລາງ ທຳນາຍຝັນ ທຳນາຍລັກສະນະ ທຳນາຍຫນູກັດຜ້າ ທຳພິທີບູຊາໄຟ ພິທີເບີກແວ່ນວຽນທຽນ ພິທີຊັດແກລບບູຊາໄຟ ພິທີຊັດຣຳບູຊາໄຟພິທີຊັດເຂົ້າສານບູຊາໄຟ ພິທີຕື່ມເຕີມເນີຍບູຊາໄຟ ພິທີຕື່ມເຕີມນ້ຳມັນບູຊາໄຟ ພິທີພົ່ນເຄື່ອງເຊັ່ນບູຊາໄຟ ຯລຯ (ພຣະສຸຕຕັນຕປິດົກແປລ ທີ. ສີ. ໙/໒໑-໒໗/໘-໑໐)

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕທ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໙ ອນາປັຕຕິວາຣ

ເດັຽຣະສານວິຊາ ແມ່ນແທ້ບໍ່" ກິກຊຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທລເຈົ້າຊົງຕຳຫນິວ່າ "ຯລຯ ກິກຊຸທັງຫລາຍ ຈັ່ງໃດພວກກິກຊຸນີຈັພພັຄຄີຍ໌ຈຶ່ງຮຽນເດັຽຣະສານວິຊາລະ ກິກຊຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຊຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໐໑໔] ກໍກິກຊຸນີໃດຮຽນເດັຽຣະສານວິຊາ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງກິກຊຸນີຈັພພັຄຄີຍ໌ ຈົບ

### ສິກຂາບົທວິກັງຄ໌

[໑໐໑໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . .

ໃດ

ຄໍາວ່າ ກິກຸຫຼຸນີ ມີອະທິບາຍວ່າ ຊື່ວ່າກິກຸຫຼຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກຸຫຼຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ເດັຽຣະສານວິຊາ ຫມາຍເຖິງ ສິລປວິທຍາຢ່າງໃດຢ່າງນຶ່ງພາຍນອກພຣະສາສນາທີ່ບໍ່ມີປໂຍດ

ຄໍາວ່າ ຮຽນ ຄື ຮຽນເປັນບົທ ຕ້ອງອາບັຕິປາຈິຕຕິຍ໌ທຸກໆບົທ ຮຽນເປັນອັກຂຣ ຕ້ອງອາບັຕິປາຈິຕຕິຍ໌ທຸກໆຕົວອັກຂຣ

**ອນາປັຕຕິວາຣ**

ກິກຸຫຼຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໑໖] ໑. ກິກຸຫຼຸນີຮຽນວິຊາຂຽນຫນັງສື

໒. ກິກຸຫຼຸນີຮຽນທ່ອງຈໍາ

໓. ກິກຸຫຼຸນີຮຽນພຣະປຣິຕຣເພື່ອຄຸ້ມຄອງຕນ໑

໔. ກິກຸຫຼຸນີວິກົລຈິຕ

໕. ກິກຸຫຼຸນີຕົ້ນບັນຍັດ

ສິກຂາບົທທີ ໙ ຈົບ

**ຫມາຍເຫດ :**

໑ ຄືທ່ອງມນຕ໌ປ້ອງກັນຍັກສ໌ ທ່ອງມນຕ໌ກະບໍຣິເວຕກັນບໍ່ໃຫ້ງູເຂົ້າມາ (ວິ. ອ. ໒/໑໐໑໖/໕໑໑)

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໑໐ ພຣະບັຍັຕິ**

**໕. ຈິຕຕາຄາຣວັຄ**

**ສິກຂາບົທທີ ໑໐**

ວ່າດ້ວຍການສອນເດັຽຣະສານວິຊາ

**ເຣື້ອງກິກຂຸນີຈັພພັຄຄີຍ໌**

[໑໐໑໗] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຄ ບິຓຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກກິກຂຸນີຈັພພັຄຄີຍ໌ສອນເດັ່ງຣະສານວິຊາ ຊາວບ້ານ ຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກກິກຂຸນີຈັພພັຄຄີຍ໌ຈຶ່ງສອນເດັ່ງຣະສານວິຊາເຫມືອນ ຍິງຄຣືຫັສຖ໌ຜູ້ບໍຣິໂກຄກາມລະ" ກິກຂຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕໍາຫນິ ປະນາມ ໂພນທະນາ ບັນດາກິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກກິກຂຸນີຈັພພັຄ ຄີຍ໌ ຈຶ່ງສອນເດັ່ງຣະສານວິຊາລະ" ຄັນແລ້ວ ກິກຂຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກກິກຂຸທັງ ຫລາຍໃຫ້ຊາບ ພວກກິກຂຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະກາຄຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸ ທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ພວກກິກຂຸນີຈັພພັຄຄີຍ໌ສອນເດັ່ງຣະສານວິຊາ ແມ່ນ ແທ້ບໍ" ກິກຂຸທັງຫລາຍທູລຣັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທລເຈົ້າຊົງ ຕໍາຫນິວ່າ "ຯລຯ ກິກຂຸທັງຫລາຍ ຈັ່ງໃດພວກກິກຂຸນີຈັພພັຄຄີຍ໌ຈຶ່ງສອນເດັ່ງຣະສານວິຊາລະ ກິກຂຸທັງຫລາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດ ໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຣັບສັ່ງໃຫ້ກິກຂຸນີທັງ ຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໑໘] ກໍກິກຂຸນີໃດສອນເດັ່ງຣະສານວິຊາ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງກິກຂຸນີຈັພພັຄຄີຍ໌ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຓຫ໌] ໕. ຈິຕຕາຄາວັຄ ສິກຂາບົທທີ ໑໐ ອນາ ປັຕຕິວາຣ**

**ສິກຂາບົທວິກັງຄ໌**

[໑໐໑໙] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . .

ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ດົງຣະສານວິຊາ ຫມາຍເຖິງ ສິລປວິທຍາຢ່າງໃດຢ່າງນຶ່ງນອກພຣະສາສນາທີ່ບໍ່ມີປໂຍດ

ຄຳວ່າ ສອນ ຄື ສອນເປັນບົທ ຕ້ອງອາບັຕິປາຈິຕຕີຍ໌ທຸກໆບົທ ສອນເປັນອັກສຣ ຕ້ອງອາບັຕິປາຈິຕຕີຍ໌ທຸກໆຕົວອັກສຣ

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໔໐] ໑. ພິກຂຸນີສອນວິຊາຂຽນຫນັງສື

໒. ພິກຂຸນີສອນກາຣທ່ອງຈຳ໑

໓. ພິກຂຸນີສອນພຣະປຣິຕຣເພື່ອຄຸ້ມຄອງ

໔. ພິກຂຸນີວິກລຈິຕ

໕. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໑໐ ຈົບ

ຈິຕຕາຄາຣວັຄທີ ໕ ຈົບ

**ຫມາຍເຫດ :**

໑ ກາຣທ່ອງຈຳ ຄືສາສຕຣ໌ວ່າດ້ວຍກາຣຊົງຈຳ ຊຶ່ງເມື່ອປະຕິບັດຕາມທີ່ກ່າວໄວ້ ຈະຊົງຈຳຄັມພີຣ໌ໄດ້ມາກມາຍ (ກງ໌ຂາ. ຜີກາ ໕໐໓)

## ພຣະວິນັຍປິດົກ ພິກຂຸນີວິກັງຄ໌ [໕. ປາຈິຕຕີຍກັຕຫ໌] ໖. ອາຣາມວັຄ ສິກຂາບົທທີ ໑ ນິທານວັຕຖຸ

## ໖. ອາຣາມວັຄ

ຫມວດວ່າດ້ວຍອາຣາມ

**ສິກຂາບົທທີ ໑**

ວ່າດ້ວຍການເຂົ້າອາຣາມ ໂດຍບໍ່ບອກ

**ເຣື້ອງກິກສຸນີຫລາຍຮູບ**

[໑໐໔໑] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທສເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິຓທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກສຸຫລາຍຮູບມີຈີວອນຜືນດຽວກໍາລັງຕັດຍີບຈີວອນຢູ່ໃນອາວາສໃກ້ຫມູ່ບ້ານ ກິກສຸນີທັງຫລາຍເຂົ້າໄປສູ່ອາຣາມ ໂດຍບໍ່ບອກເຂົ້າໄປຫາກິກສຸເຫລົ່ານັ້ນເຖິງທີ່ຢູ່ ກິກສຸທັງຫລາຍຈຶ່ງຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກກິກສຸນີຈຶ່ງເຂົ້າມາສູ່ອາຣາມໂດຍບໍ່ບອກລະ" ຄັນແລ້ວ ກິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກກິກສຸທັງຫລາຍໃຫ້ຊາບ ພວກກິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກສຸທັງຫລາຍວ່າ "ກິກສຸທັງຫລາຍ ຊາບວ່າ ພວກກິກສຸນີເຂົ້າໄປສູ່ອາຣາມໂດຍບໍ່ບອກ ແມ່ນແທ້ບໍ" ກິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕໍາຫນິວ່າ "ฯລฯ ກິກສຸທັງຫລາຍ ຈັ່ງໃດພວກກິກສຸນີຈຶ່ງເຂົ້າໄປສູ່ອາຣາມໂດຍບໍ່ບອກລະ ກິກສຸທັງຫລາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ກິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

ກໍກິກສຸນີໃດເຂົ້າໄປສູ່ອາຣາມໂດຍບໍ່ບອກ ຕ້ອງອາບັຕິປາຈິຕຕິຍ໌

ສິກຂາບົທນີ້ພຣະຜູ້ມີພຣະກາຄຊົງບັນຍັດໄວ້ແກ່ກິກສຸນີທັງຫລາຍຢ່າງນີ້

ເຣື້ອງກິກສຸນີຫລາຍຮູບ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຓฑ໌] ຝ໌. ອາຣາມວັຄ ສິກຂາບົທທີ ໑ ພຣະອນຸບັນຍັດ**

**ເລື້ອງພິກຂຸນີບໍ່ບອກລາກອາຣາມ**

[໑໐໘໔] ສມັຍນັ້ນ ພິກຂຸເຫລົ່ານັ້ນຫລີກໄປຈາກອາວາສນັ້ນ ພິກຂຸນີທັງຫລາຍຄິດວ່າ"ພຣະຄຸນເຈົ້າທັງຫລາຍຈາກໄປແລ້ວ" ຈຶ່ງບໍ່ໄປອາຣາມ ເມື່ອພິກຂຸເຫລົ່ານັ້ນກັບມາສູ່ອາວາສນັ້ນອີກ ພິກຂຸນີທັງຫລາຍຮູ້ວ່າ "ພຣະຄຸນເຈົ້າທັງຫລາຍມາແລ້ວ" ບອກແລ້ວພາກັນເຂົ້າໄປຫາພິກຂຸເຫລົ່ານັ້ນຂາບໄຫວ້ແລ້ວຢືນຢູ່ ນະ ທີ່ສົມຄວຣ ພິກຂຸເຫລົ່ານັ້ນໄດ້ກ່າວກັບພິກຂຸນີເຫລົ່ານັ້ນຜູ້ຢືນຢູ່ ນະ ທີ່ສົມຄວຣ ດັ່ງນີ້ວ່າ "ນ້ອງຍິງທັງຫລາຍ ເພາະເຫຕຸໃດ ພວກທ່ານຈຶ່ງບໍ່ກວາດອາຣາມ ບໍ່ຕັ້ງນ້ຳຈັນນ້ຳໃຊ້ໄວ້ລະ" ພິກຂຸນີເຫລົ່ານັ້ນຕອບວ່າ "ພຣະຜູ້ມີພຣະພາຄເຈົ້າບັນຍັດສິກຂາບົທໄວ້ວ່າ 'ພິກຂຸນີບໍ່ຄວນເຂົ້າອາຣາມ' ດັ່ງນັ້ນ ພວກຂະນ້ອຍຈຶ່ງບໍ່ມາ" ພິກຂຸເຫລົ່ານັ້ນໄດ້ຂາບທູລເລື້ອງນັ້ນໃຫ້ພຣະຜູ້ມີພຣະພາຄເຈົ້າຊາບ ພຣະຜູ້ມີພຣະພາຄເຈົ້າອນຸຍາຕວ່າ "ພິກຂຸທັງຫລາຍ ເຮົາອນຸຍາຕໃຫ້ບອກພິກຂຸທີ່ມີຢູ່ແລ້ວເຂົ້າອາຣາມໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງ ດັ່ງນີ້

**ພຣະອນຸບັນຍັດ**

ອີກຢ່າງນຶ່ງ ພິກຂຸນີໃດເຂົ້າໄປສູ່ອາຣາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັຕິປາຈິຕຕີຍ໌

ເລື້ອງພິກຂຸນີບໍ່ບອກລາກອາຣາມ ຈົບ

[໑໐໘໕] ສມັຍນັ້ນ ພິກຂຸເຫລົ່ານັ້ນຫລີກໄປຈາກອາວາສນັ້ນແລ້ວກັບມາສູ່ອາວາສນັ້ນອີກ ພິກຂຸນີທັງຫລາຍຄິດວ່າ "ພຣະຄຸນເຈົ້າທັງຫລາຍຈາກໄປແລ້ວ" ຈຶ່ງບໍ່ບອກ ເຂົ້າໄປສູ່ອາຣາມ ພວກທ່ານໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາຄເຈົ້າບັນຍັດສິກຂາບົທໄວ້ວ່າ'ພິກຂຸນີບໍ່ບອກພິກຂຸທີ່ມີຢູ່ບໍ່ຄວນເຂົ້າອາຣາມ ' ພວກເຮົາບໍ່ໄດ້ບອກພິກຂຸທີ່ມີຢູ່ເຂົ້າອາຣາມຕ້ອງອາບັຕິປາຈິຕຕີຍ໌ແລ້ວແລ້ວຕິບໍ" ພິກຂຸທັງຫລາຍໄດ້ຂາບທູລເລື້ອງນັ້ນໃຫ້ພຣະຜູ້ມີພຣະພາຄເຈົ້າຊາບ ລຳດັບນັ້ນ ພຣະຜູ້ມີພຣະພາຄເຈົ້າສະແດງທັມມີກຖາເພາະເລື້ອງນີ້ເປັນຕົ້ນເຫຕຸ ແລ້ວຮັບສັ່ງກັບພິກຂຸທັງຫລາຍວ່າ ຯລຯ ແລ້ວຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຓທ໌] ໕. ອາຣາມວັດ ສິກຂາບົທທີ ໑ ບົທພາຊນີຍ໌**

**ພຣະອນຸບັນຍັດ**

[໑໐໘໔] ອີກຢ່າງນຶ່ງ ພິກຂຸນີໃດຮູ້ຢູ່ ເຂົ້າໄປສູ່ອາຣາມທີ່ມີພິກຂຸໂດຍບໍ່ບອກ ຕ້ອງອາບັຕິ ປາຈິຕຕີຍ໌

**ສິກຂາບົທວິພັງຄ໌**

[໑໐໘໕] ຄຳວ່າ ອີກຢ່າງນຶ່ງ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ອີກຢ່າງນຶ່ງ . . . ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີ ພຣະກາຄຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸນີຮູ້ເອງ ຄົນເຫລົ່າອື່ນບອກທ່ານ ຫລືພິກຂຸເຫລົ່ານັ້ນບອກອາຣາມທີ່ຊື່ວ່າ ມີພິກຂຸ ຄື ສຖານທີ່ມີພິກຂຸອາສັຍຢູ່ແມ່ນທີ່ໂຄນຕົ້ນໄມ້

ຄຳວ່າ ເຂົ້າໄປສູ່ອາຣາມໂດຍບໍ່ບອກ ຄື ບໍ່ບອກກ່າວພິກຂຸ ສາມເເຣ ຫລື ຄົນວັດ ເມື່ອລ່ວງເຂຕອາຣາມທີ່ມີຮົ້ວລ້ອມ ຕ້ອງອາບັຕິປາຈິຕຕີຍ໌ ເມື່ອລ່ວງສູ່ອຸປຈາຣແຫ່ງອາຣາມທີ່ມີຮົ້ວລ້ອມ ຕ້ອງອາບັຕິປາຈິຕຕີຍ໌

**ບົທກາຊນີຍ໌**

[໑໐໘໖] ອາຣາມທີ່ມີພິກຂຸ ພິກຂຸນີສຳຄັນວ່າມີພິກຂຸ ເຂົ້າໄປສູ່ອາຣາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັຕິປາຈິຕຕີຍ໌

ອາຣາມທີ່ມີພິກຂຸ ພິກຂຸນີບໍ່ແນ່ໃຈ ເຂົ້າໄປສູ່ອາຣາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັຕິທຸກກົຏ

ອາຣາມທີ່ມີພິກຂຸ ພິກຂຸນີສຳຄັນວ່າບໍ່ມີພິກຂຸ ເຂົ້າໄປສູ່ອາຣາມໂດຍບໍ່ບອກພິກຂຸທີ່ມີຢູ່ ບໍ່ຕ້ອງອາບັຕິ

ອາຣາມທີ່ບໍ່ມີພິກຂຸ ພິກຂຸນີສຳຄັນວ່າມີພິກຂຸ ເຂົ້າໄປສູ່ອາຣາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັຕິທຸກກົຏ

ອາຣາມທີ່ບໍ່ມີພິກຂຸ ພິກຂຸນີບໍ່ແນ່ໃຈ ເຂົ້າໄປສູ່ອາຣາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັຕິທຸກກົຏ

ອາຣາມທີ່ບໍ່ມີພິກຂຸ ພິກຂຸນີສຳຄັນວ່າບໍ່ມີພິກຂຸ ເຂົ້າໄປສູ່ອາຣາມໂດຍບໍ່ບອກພິກຂຸທີ່ມີຢູ່ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໐໔໗] ໑. ພິກສຸນີເຂົ້າໄປໂດຍບອກພິກສຸທີ່ມີຢູ່
໒. ພິກສຸບໍ່ມີຢູ່ ພິກສຸນີຈຶ່ງເຂົ້າໄປໂດຍບໍ່ບອກ
໓. ພິກສຸນີເຂົ້າໄປຢ່າງເບິ່ງສີສະພິກສຸນີຜູ້ເຂົ້າໄປກ່ອນ
໔. ພິກສຸນີໄປ ຕະ ສຖານທີ່ມີພິກສຸນີກໍາລັງປະຊຸມກັນ
໕. ພິກສຸນີຍ່າງຕາມທາງທີ່ຜ່ານໄປອາຣາມ
໖. ພິກສຸນີຜູ້ເປັນໄຂ້
໗. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໘. ພິກສຸນີວິກົລຈິຕ
໙. ພິກສຸນີຕົ້ນບັນຍັດ

ສິກຂາບົທທີ ໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕຫ໌] ໖. ອາຣາມວັຄ ສິກຂາບົທທີ ໒ ນິທານ ວັຕຖຸ**

**໖. ອາຣາມວັຄ**

**ສິກຂາບົທທີ ໒**
ວ່າດ້ວຍການດ່າບໍຣິການພິກສຸ

**ເຣື້ອງພຣະກັປປິຕກະ**
[໑໐໔໘] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທລເຈົ້າປະທັບຢູ່ ຕະ ກູຜາຄາຣສາລາປ່າມຫາວັນ ເຂຕກຸງ ເວສາລີ ຄັ້ງນັ້ນ ທ່ານພຣະກັປປິຕກະຜູ້ເປັນອຸປັຊຊາຍ໌ຂອງທ່ານພຣະອຸບາລີພັກຢູ່ໃນປ່າຊ້າ ຄາວນັ້ນ ມີພິກສຸນີຮູບນຶ່ງອາຍຸຫລາຍກວ່າພວກພິກສຸນີຈັພພັຄຄີຍ໌ມໍຣຕກາພ ພວກພິກສຸນີຈັພພັຄຄີຍ໌ຊ່ວຍ ກັນນໍາ(ສົພ)ພິກສຸນີນັ້ນອອກໄປເຜົາ ແລ້ວກໍ່ສຖູປໄວ້ບໍ່ໄກທີ່ພັກຂອງພຣະກັປປິຕກະ ແລ້ວຮໍ່າໄຫ້ທີ່ ສຖູປນັ້ນ ລໍາດັບນັ້ນ ທ່ານພຣະກັປປິຕກະຣໍາຄານສຽງນັ້ນ ຈຶ່ງທໍາລາຍສຖູປນັ້ນເສັຽແຫລກລະອຽດ

ພວກພິກຂຸຕີຈັພພັຄຄີຍ໌ປຶກສາກັນວ່າ "ພຣະກັປປິຕກະທຳລາຍສຖູປແມ່ເຈົ້າຂອງພວກເຮົາ ມາເຖີດ ພວກເຮົາຈະຂ້າພຣະກັປປິຕກະນັ້ນ" ພິກຂຸຕີຮູບນຶ່ງບອກຄວາມນັ້ນໃຫ້ທ່ານພຣະອຸບາລີຊາບ ທ່ານ ພຣະອຸບາລີນຳເຣື້ອງນັ້ນໄປບອກທ່ານພຣະກັປປິຕກະ ທ່ານພຣະກັປປິຕກະໜີອອກຈາກວິຫາຣໄປ ລີ້ຢູ່ ຄາວນັ້ນພວກພິກຂຸຕີຈັພພັຄຄີຍ໌ເຂົ້າໄປທີ່ວິຫາຣຂອງທ່ານພຣະກັປປິຕກະຕັ້ງຢູ່ ຄັນແລ້ວ ຊ່ອຍກັນຂົນກ້ອນຫີນແລະກ້ອນດິນທັບວິຫາຣຂອງທ່ານ ແລ້ວຈາກໄປດ້ອຍເຂົ້າໃຈວ່າ "ພຣະ ກັປປິຕກະມໍຣຕກາພແລ້ວ" ຄັນຣາຕຣີນັ້ນຜ່ານໄປ ທ່ານພຣະກັປປິຕກະຄອງອັນຕຣວາສກ ຖືບາຕຣ ແລະຈີວອນເຂົ້າໄປບິຕຫບາຕໃນກຸງເວສາລີແຕ່ເຊົ້າ ພວກພິກຂຸຕີຈັພພັຄຄີຍ໌ເຫັນທ່ານຍ່າງທ່ຽວ ບິຕຫບາຕຢູ່ ກ່າວກັນຢ່າງນີ້ວ່າ "ພຣະກັປປິຕກະຍັງມີຊີວິຕຢູ່ ໃຜກັນນະທີ່ນຳແຜນການຂອງພວກ ເຮົາໄປບອກ" ຄັນໄດ້ຊາບວ່າ "ພຣະຄຸຕເຈົ້າອຸບາລີນຳແຜນການຂອງພວກເຮົາໄປບອກ" ຈຶ່ງພາກັນ ດ່າທ່ານພຣະອຸບາລີວ່າ "ທ່ານຜູ້ເປັນທາສຮັບໃຊ້ເມື່ອເວລາອາບນ້ຳ ຄອຍຖູຂີ້ໄຄລ ມີຕະກູນຕ່ຳຄົນນີ້ ຈັ່ງໃດຈຶ່ງນຳແຜນການຂອງເຮົາໄປບອກລະ" ບັນດາພິກຂຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸຕີຈັພພັຄຄີຍ໌ຈຶ່ງດ່າພຣະຄຸຕເຈົ້າອຸບາລີລະ" ຄັນແລ້ວພິກຂຸຕີເຫລົ່າ ນັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີ ພຣະພາຄໃຫ້ຊົງຊາບ

## ພຣະວິນັຍປິດົກ ພິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ຝ. ອາຣາມວັຄ ສິກຂາບົທທີ ໔ ສິກຂາບົທວິກັງຄ໌

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸ ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພວກພິກຂຸຕີຈັພພັຄຄີຍ໌ດ່າອຸບາລີ ແມ່ນແທ້ບໍ" ພິກຂຸທັງ ຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທລເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທລເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພວກພິກຂຸຕີຈັພພັຄຄີຍ໌ດ່າອຸບາລີລະ ພິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸຕີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງ ດັ່ງນີ້

**ພຣະບັນຍັດ**

[໑໐໔໙] ກໍພິກຂຸນີໃດດ່າຫລືບໍຣິພາສພິກຂຸ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພຣະພັປປີຕກະ ຈົບ

**ສິກຂາບົທວິພັງຄ໌**

[໑໐໕໐] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ. . . ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມຫມາຍນີ້

ຄໍາວ່າ ພິກຂຸ ໄດ້ແກ່ ອຸປສັມບັນ

ຄໍາວ່າ ດ່າ ຄື ດ່າດ້ວຍອັກໂກສວັຕຖຸ ໑໐ ຢ່າງ໑ ຕ້ອງອາບັຕິປາຈິຕຕີຍ໌

ຄໍາວ່າ ບໍຣິພາສ ຄື ສະແດງອາການທີ່ຫນ້າຢ້ານ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ອັກໂກສວັຕຖຸ ຄໍາທີ່ໃຊ້ດ່າ ໑໐ ຢ່າງ ໃນວິນັຍທ່ານວ່າ ໄດ້ແກ່ ໂອມສວາທ ຄືຄໍາກ່າວສຽດສີ ໑໐ ຢ່າງ (ວິ. ປ.

໗໘/໓໓໐/໔໙໗, ວິ. ອ. ໓/໓໓໐/໔໗໓, ດູ ວິນັຍປິດົກແປລ ເຫລັ້ມ ໔ ຂໍ້ ໑໕ ຫນ້າ ໔໐໔)

ສ່ວນໃນສັມບົທອັນຖະກຖາ ຫມາຍເຖິງຄໍາທີ່ໃຊ້ດ່າ ໑໐ ຢ່າງ ຄືຄໍາດ່າວ່າ (໑) ເຈົ້າເປັນໂຈຣ (໔) ເປັນຄົນພາລ (໓) ເປັນຄົນຫລົງ (໔) ເປັນອູຖ (໕) ເປັນໂຄ (໖) ເປັນລາ (໗) ເປັນສັຕວ໌ນຣົກ (໘) ເປັນສັຕວ໌ເດັຽຣະສານ (໙) ເປັນຄົນບໍ່ມີສຸຄຕິ (໑໐) ເປັນຄົນຫວັງໄດ້ສະເພາະທຸຄຕິ (ຂຸ. ຣ. ອ. ໔/໑໕/໔໖)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕທ໌] ໖. ອາຮາມວັຄ ສິກຂາບົທທີ ໔ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໖໑] ອຸປສັມບັນ ກິກບຸຕີສຳຄັນວ່າເປັນອຸປສັມບັນ ດ່າຫລືບໍຣິກາສ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ກິກບຸຕີບໍ່ແນ່ໃຈ ດ່າຫລືບໍຣິກາສ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ກິກບຸຕີສຳຄັນວ່າເປັນອນຸປສັມບັນ ດ່າຫລືບໍຣິກາສ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກຕ**

ກິກບຸຕີດ່າຫລືບໍຣິກາສອນຸປສັມບັນ ຕ້ອງອາບັຕິທຸກກຕ
ອນຸປສັມບັນ ກິກບຸຕີສຳຄັນວ່າເປັນອຸປສັມບັນ ດ່າຫລືບໍຣິກາສ ຕ້ອງອາບັຕິທຸກກຕ
ອນຸປສັມບັນ ກິກບຸຕີບໍ່ແນ່ໃຈ ດ່າຫລືບໍຣິກາສ ຕ້ອງອາບັຕິທຸກກຕ
ອນຸປສັມບັນ ກິກບຸຕີສຳຄັນວ່າເປັນອນຸປສັມບັນ ດ່າຫລືບໍຣິກາສ ຕ້ອງອາບັຕິທຸກກຕ

**ອນາປັຕຕິວາຣ**

ກິກບຸຕີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໐໖໔] ໑. ກິກບຸຕີມຸ່ງອັນຖະ
໒. ກິກບຸຕີມຸ່ງລັມ
໓. ກິກບຸຕີມຸ່ງສັ່ງສອນ
໔. ກິກບຸຕີວິກົລຈິຕ
໕. ກິກບຸຕີຕົ້ນບັນຍັດ

ສິກຂາບົທທີ ໒ ຈົບ

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຕທ໌] ຝ. ອາຣາມວັຄ ສິກຂາບົທທີ ໓ ນິທານວັຕຖຸ**

**ຝ. ອາຣາມວັຄ**

**ສິກຂາບົທທີ ໓**

ວ່າດ້ວຍການບໍຣິກາສຄຕະ

**ເຣື້ອງກິກຂຸຕີຈັຕຫກາລີ**

[໑໐໖໖] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທຣເຈົ້າປະທັບຢູ່ ຕະ ພຣະເຊຕວັນ ອາຮາມຂອງອນາຖ ບິຕທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກຂຸຕີຈັຕຫກາລີຊອບກໍ່ຄວາມບາດໝາງ ກໍ່ກາຣຜິດ ຖຽງ ກໍ່ກາຣວິວາທ ກໍ່ເຣື້ອງນອງນັນ ກໍ່ອທິກຣຕ໌(ບັນຫາຂອງສົງຄ໌)ໃນສົງຄ໌ ເມື່ອສົງຄ໌ທຳກັມ ແກ່ຈັຕຫກາລີນັ້ນ ກິກຂຸຕີຖຸລລນັນທາກໍ່ຄັດຄ້ານ ຕໍ່ມາ ກິກຂຸຕີຖຸລລນັນທາຍ່າງທາງໄປຍັງໝູ່ ບ້ານດ້ວຍລຸຣະບາງຢ່າງ ກິກຂຸຕີສົງຄ໌ພໍຮູ້ວ່າ "ກິກຂຸຕີຖຸລລນັນທາຈາກໄປແລ້ວ" ຈຶ່ງລົງອຸກ ເປຂນີຍກັມແກ່ກິກຂຸຕີຈັຕຫກາລີເພາະບໍ່ເຫັນອາບັຕິ ຄັນກິກຂຸຕີຖຸລລນັນທາທຳລຸຣະນັ້ນໃນໝູ່ ບ້ານເສັດແລ້ວກັບມາຍັງກຸງສາວັຕຖີ ເມື່ອກິກຂຸຕີຖຸລລນັນທາກຳລັງມາ ກິກຂຸຕີຈັຕຫກາລີບໍ່ປູ ອາສນະ ບໍ່ຕັ້ງນ້ຳລ້າງຕີນ ຕັ່ງຮອງຕີນ ກະເບື້ອງເຊັດຕີນ ບໍ່ລຸກຮັບບາຕຣແລະຈີວອນ ບໍ່ເອົານ້ຳດື່ມ ຕ້ອນຮັບ ກິກຂຸຕີຖຸລລນັນທາໄດ້ກ່າວກັບກິກຂຸຕີຈັຕຫກາລີນັ້ນດັ່ງນີ້ວ່າ "ເມື່ອເຮົາກຳລັງມາ ຈັ່ງໃດ ທ່ານບໍ່ປູອາສນະ ບໍ່ຕັ້ງນ້ຳລ້າງຕີນ ຕັ່ງຮອງຕີນ ກະເບື້ອງເຊັດຕີນ ບໍ່ລຸກຮັບບາຕຣແລະຈີວອນ ບໍ່ ເອົານ້ຳດື່ມຕ້ອນຮັບລະ" ກິກຂຸຕີຈັຕຫກາລີຕອບວ່າ "ແມ່ເຈົ້າ ຄືນບໍ່ມີທີ່ເພິ່ງກໍເປັນຢ່າງນີ້ແຫລະ" ກິກຂຸຕີຖຸລລນັນທາຖາມວ່າ "ເພາະເຫຕຸໃດທ່ານຈຶ່ງບໍ່ມີທີ່ເພິ່ງ" ກິກຂຸຕີຈັຕຫກາລີຕອບວ່າ "ແມ່ ເຈົ້າ ກິກຂຸຕີເຫລົ່ານີ້ເຂົ້າໃຈວ່າ ຂະນ້ອຍບໍ່ມີທີ່ເພິ່ງ ບໍ່ມີຊື່ສຽງ ບໍ່ມີໃຜຄອຍກ່າວປົກປ້ອງ ຈຶ່ງລົ ງອຸກເຂປນີຍກັມເພາະບໍ່ເຫັນອາບັຕິ" ກິກຂຸຕີຖຸລລນັນທາຈຶ່ງຂຶ້ງເຄີຍດບໍຣິກາຜຄຕະວ່າ "ກິກຂຸຕີ ພວກນີ້ໂງ່ງ່າວ ກິກຂຸຕີພວກນີ້ບໍ່ສລາດ ກິກຂຸຕີພວກນີ້ບໍ່ຮູ້ຈັກກັມ ໂທສຂອງກັມ ກັມວິບັຕິ ຫລືກັມສົມບັຕ" ບັນດາກິກຂຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ ເຈົ້າຖຸລລນັນທາຈຶ່ງຂຶ້ງເຄີຍດບໍຣິກາຜຄຕະລະ" ຄັນແລ້ວ ກິກຂຸຕີເຫລົ່ານັ້ນໄດ້ນຳເຣື້ອງນີ້ ໄປບອກກິກຂຸທັງຫລາຍໃຫ້ຊາບ ພວກກິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຂຸ ທັງຫລາຍວ່າ "ກິກຂຸທັງຫລາຍ ຊາບວ່າ ກິກຂຸຕີຖຸລລນັນທາເຄືອງຄຽດ ບໍຣິກາຜຄຕະ ແມ່ນ ແທ້ບໍ" ກິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທຣເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທຣເຈົ້າຊົງ ຕຳໜິວ່າ "ຯລຯ ກິກຂຸທັງຫລາຍ ຈັ່ງໃດກິກຂຸຕີຖຸລລນັນທາຈຶ່ງຂຶ້ງເຄີຍດບໍຣິກາຜຄຕະລະ ກິກຂຸ ທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດ

ໃຫ້ດິນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ກິກษຸດີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໓໔] ກໍກິກษຸດີໃດຂຶ້ງເຄີຍດ ບໍຣິກາษຄຕະ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງກິກษຸດີຈັຕໝກາລີ ຈົບ

**ສິກຂາບົທວິກັງຄ໌**

[໑໐໓໕] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ. . . ໃດ

ຄໍາວ່າ ກິກษຸດີ ມີອະທິບາຍວ່າ ຊື່ວ່າກິກษຸດີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ກິກษຸດີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຂຶ້ງເຄີຍດ ພຣະຜູ້ມີພຣະກາຄຕຣັສຫມາຍເຖິງຄວາມໂກດ

ທີ່ຊື່ວ່າ ຄຕະ ຕຣັສຫມາຍເຖິງກິກษຸດີສົງฆ໌

**ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຕฑ໌] ໓. ອາຣາມວັຄ ສິກຂາບົທທີ ໓ ອນາປັຕຕິວາຣ**

ຄໍາວ່າ ບໍຣິກາษ ຄື ບໍຣິກາษວ່າ "ກິກษຸດີພວກນີ້ໂງ່ງ່າວ ກິກษຸດີພວກນີ້ບໍ່ສລາດ ກິກษຸດີພວກນີ້ບໍ່ຮູ້ຈັກກັມ ໂທษຂອງກັມ ກັມວິບັຕິ ຫລືກັມສົມບັຕ" ຕ້ອງອາບັຕິປາຈິຕຕີຍ໌ ບໍຣິກາษກິກษຸດີຫລາຍຮູບ ກິກษຸດີຮູບດຽວ ຫລືອນຸປສັມບັນ ຕ້ອງອາບັຕິທຸກກຏ

**ອນາປັຕຕິວາຣ**

ກິກษຸດີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໓໖] ໑. ກິກษຸດີມຸ່ງອັຕຖະ

໒. ກິກษຸດີມຸ່ງທັມ

໓. ກິກษຸດີມຸ່ງສັ່ງສອນ

໔. ພິກຂຸຕີວິກົລຈິຕ
໕. ພິກຂຸຕີຕົ້ນບັນຍັດ

ສິກຂາບົທທີ ໓ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັຕຫ໌] ຝ. ອາຮາມວັຄ ສິກຂາບົທທີ ໔ ນິທານວັຕຖຸ

## ຝ. ອາຮາມວັຄ

**ສິກຂາບົທທີ ໔**
ວ່າດ້ວຍການຈັນຂອງຄ້ຽວຂອງຈັນເມື່ອຫ້າມກັຕຕາຫານແລ້ວ

### ເຣື້ອງພິກຂຸຕີຈັນຫລາຍທີ່ໃນນີ້ດຽວກັນ

[໑໐໓໗] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທສເຈົ້າປະທັບຢູ່ ຕະ ພຣະເຊຕວັນ ອາຮາມຂອງອນາຖບິຕທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພຣາມຕ໌ຄົນນື່ງນິມົນຕ໌ພິກຂຸຕີທັງຫລາຍໃຫ້ຈັນ ພວກພິກຂຸຕີຈັນແລ້ວ ຫ້າມກັຕຕາຫານແລ້ວ ພາກັນໄປຕະກູນຍາຕພິກຂຸຕີບາງພວກຍັງຈັນອີກ ບາງພວກນຳບິຕທບາຕກັບໄປ ຄັ້ງນັ້ນ ພຣາມຕ໌ນັ້ນໄດ້ກ່າວກັບເພື່ອນບ້ານດັ່ງນີ້ວ່າ "ນາຍທັງຫລາຍເຮົາລ້ຽງພິກຂຸຕີໃຫ້ອິ່ມຫນຳແລ້ວ ເຊີນມາເຖີດ ເຮົາຈັກລ້ຽງພວກທ່ານໃຫ້ອິ່ມຫນຳແດ່" ເພື່ອນບ້ານຜູ້ຄຸ້ນເຄີຍເຫລົ່ານັ້ນກ່າວຢ່າງນີ້ວ່າ "ນາຍທ່ານຈະລ້ຽງພວກເຮົາໃຫ້ອີ່ມໄດ້ຢ່າງໃດ ແມ່ນພວກພິກຂຸຕີທີ່ທ່ານນິມົນຕ໌ແລ້ວກໍຍັງຕ້ອງໄປທີ່ເຮືອນພວກເຮົາ ບາງພວກຍັງຈັນອີກ ບາງພວກກໍນຳບິຕທບາຕກັບໄປ" ພຣາມຕ໌ຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸຕີຈັນທີ່ເຮືອນເຮົາແລ້ວຍັງໄປຈັນທີ່ອື່ນອີກລະ ເຮົາບໍ່ສາມາດທີ່ຈະຖວາຍໃຫ້ພໍແກ່ຄວາມຕ້ອງການຫລື" ພິກຂຸຕີທັງຫລາຍໄດ້ຍິນພຣາມຕ໌ຕຳຫນິ ປະນາມ ໂພນທະນາ ບັນດາພິກຂຸຕີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸຕີຈັນແລ້ວ ຫ້າມກັຕຕາຫານແລ້ວຍັງຈັນໃນທີ່ອື່ນອີກ" ຄັນແລ້ວ ພິກຂຸຕີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະກາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມກິກຸ ທັງຫລາຍວ່າ "ກິກຸທັງຫລາຍ ຊາບວ່າພວກກິກຸດີຈັນແລ້ວ ຫ້າມກັຕຕາຫາຣແລ້ວຍັງຈັນໃນທີ່ ອື່ນອີກ ແມ່ນແທ້ບໍ" ກິກຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄ ພຸທສເຈົ້າຊົງຕຳຫນິວ່າ "ฯລฯ ກິກຸທັງຫລາຍ ຈັ່ງໃດພວກກິກຸດີຈັນແລ້ວຫ້າມກັຕຕາຫາຣແລ້ວ ຍັງຈັນໃນທີ່ອື່ນອີກລະ ກິກຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ ໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ກິກຸດີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໓໗] ກໍກິກຸດີໃດໄດ້ຮັບນິມົນຕ໌ແລ້ວ ບອກຫ້າມກັຕຕາຫາຣແລ້ວ ຄ້ຽວຂອງຄ້ຽວ ຫລືຈັນ ຂອງຈັນ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງກິກຸດີຈັນຫລາຍທີ່ໃນມື້ດຽວກັນ ຈົບ

**ສິກຂາບົທວິກັງຄ໌**

[໑໐໓໘] ຄຳວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ . . . ໃດ

ຄຳວ່າ ກິກຸດີ ມີອະທິບາຍວ່າ ຊື່ວ່າກິກຸດີ ເພາະເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ ເອົາວ່າ ກິກຸດີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ໄດ້ຮັບນິມົນຕ໌ແລ້ວ ຄື ໄດ້ຮັບນິມົນຕ໌ດ້ວຍໂກຊນະ ໕ ຊນິດ ຢ່າງໃດຢ່າງນຶ່ງ

**ລັກສະນະກາຣບອກຫ້າມກັຕຕາຫາຣ**

ທີ່ຊື່ວ່າ ບອກຫ້າມກັຕຕາຫາຣແລ້ວ ຄື (໑) ກິກຸດີກຳລັງຈັນ (໒) ທາຍົກນຳໂກຊນະມາຖວາຍ (໓) ທາຍົກຢູ່ໃນຫັຕຖບາສນ້ອມຖວາຍ (໔) ກິກຸດີບອກຫ້າມ

ທີ່ຊື່ວ່າ ຂອງຄ້ຽວ ຄື ຍົກເວັ້ນໂກຊນະ ໕ ເຂົ້າປຽກ ຍາມກາລິກ ສັຕຕາຫກາລິກແລະຍາວຊີວິກ໑ ນອກນັ້ນຊື່ວ່າຂອງຄ້ຽວ

ທີ່ຊື່ວ່າ ຂອງຈັນ ໄດ້ແກ່ ໂກຊນະ ໕ ຢ່າງ ຄື ເຂົ້າສຸກ ຂນົມສດ ເຂົ້າຕູ ປາ ຊີ້ນ

**ໝາຍເຫດ :**

໑ ດູ ໝາຍເຫດພຣະວິນັຍປິດົກແປລ ເຫລັ້ມ ໔ ຂໍ້ ໔໓໙ ໜ້າ ໓໙໕

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໕. ອາຮາມວັຄ ສິກຂາບົທທີ ໔ ອນາປັຕຕິວາຣ

ກິກຂຸນີຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະຈັນ" ຕ້ອງອາບັຕິທຸກກຸຏ ຈັນ ຕ້ອງອາບັຕິປາຈິຕຕີຍ໌ທຸກໆຄຳກືນ

**ບົທກາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໔໐] ໄດ້ຮັບນິມົນຕ໌ແລ້ວ ກິກຂຸນີສຳຄັນວ່າໄດ້ຮັບນິມົນຕ໌ແລ້ວ ຄ້ຽວຂອງຄ້ຽວຫລືຈັນຂອງຈັນ ຕ້ອງອາບັຕິປາຈິຕຕີຍ໌

ໄດ້ຮັບນິມົນຕ໌ແລ້ວ ກິກຂຸນີບໍ່ແນ່ໃຈ ຄ້ຽວຂອງຄ້ຽວ ຫລືຈັນຂອງຈັນ ຕ້ອງອາບັຕິປາຈິຕຕີຍ໌

ໄດ້ຮັບນິມົນຕ໌ແລ້ວ ກິກຂຸນີສຳຄັນວ່າຍັງບໍ່ໄດ້ຮັບນິມົນຕ໌ ຄ້ຽວຂອງຄ້ຽວ ຫລືຈັນຂອງຈັນ ຕ້ອງອາບັຕິປາຈິຕຕີຍ໌

**ທຸກທຸກກຸຏ**

ກິກຂຸນີຮັບປະເຄນຍາມກາລິກ ສັຕຕາຫກາລິກ ຍາວຊີວິກ ເພື່ອເປັນອາຫາຣ ຕ້ອງອາບັຕິທຸກກຸຏ ຈັນ ຕ້ອງອາບັຕິທຸກກຸຏທຸກໆຄຳກືນ

**ອນາປັຕຕິວາຣ**

ກິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໔໑] ໑. ກິກຂຸນີທີ່ທາຍົກບໍ່ໄດ້ນິມົນຕ໌

໒. ກິກຂຸນີຍັງບໍ່ຫ້າມກັຕຕາຫາຣ

໓. ກິກຂຸນີດື່ມເຂົ້າປຽກ

໔. ກິກຂຸນີບອກເຈົ້າຂອງແລ້ວຈັນ

໕. ກິກຂຸນີຈັນຂອງທີ່ເປັນຢາວກາລິກ ສັຕຕາຫກາລິກແລະຍາວຊີວິກເມື່ອມີ

ເຫຕຸຜົລຈຳເປັນ
໕. ກິກຸຫນີວິກົລຈິຕ
໗. ກິກຸຫນີຕົ້ນບັນຍັດ

ສິກຂາບົທທີ ໔ ຈົບ

## ພຣະວິນັຍປິດົກ ກິກຂຸນີວິກັງຄ໌ [໔. ປາຈິຕຕິຍກັຕຫ໌] ໕. ອາຣາມວັຄ ສິກຂາບົທທີ ໕ ນິທານວັຕຖຸ

## ໕. ອາຣາມວັຄ

### ສິກຂາບົທທີ ໕

ວ່າດ້ວຍຄວາມຫວງຕະກູນ

### ເຣື້ອງກິກຸຫນີຫວງຕະກູນ

[໑໐໔໔] ສມັຍນັ້ນ ພຣະຜູ້ມີພຣະກາຄພຸທຣເຈົ້າປະທັບຢູ່ ຓະ ພຣະເຊຕວັນ ອາຣາມຂອງອນາຖບິຕຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ກິກຸຫນີຮູບນຶ່ງທງວບິຕຫບາຕໃນທາງຮ່ອມແຫ່ງນຶ່ງໃນກຸງສາວັຕຖີ ເຂົ້າໄປທີ່ຕະກູນແຫ່ງນຶ່ງ ນັ່ງເທິງອາສນະທີ່ເຂົາປູໄວ້ ຄົນຄົນທັງຫລາຍນິມົນຕ໌ທ່ານໃຫ້ຈັນແລ້ວກ່າວດັ່ງນີ້ວ່າ "ແມ່ນກິກຸຫນີອື່ນໆກໍນິມົນຕ໌ມາເຖີດຂະນ້ອຍ" ຂຕະນັ້ນ ກິກຸຫນີນັ້ນຄິດວ່າເຮັດຢ່າງໃດ ກິກຸຫນີອື່ນໆຈຶ່ງຈະບໍ່ມາ ຈຶ່ງເຂົ້າໄປຫາກິກຸຫນີທັງຫລາຍບອກວ່າ "ໃນທີ່ພຸ້ນສຸນັກດຸໂຄດຸ ສຖານທີ່ລື່ນ ພວກທ່ານຢ່າໄປທີ່ນັ້ນເລີຍ" ກິກຸຫນີແມ່ນອີກຮູບນຶ່ງໄດ້ໄປບິຕຫບາຕທີ່ທາງຮ່ອມນັ້ນ ເຂົ້າໄປທີ່ຕະກູນນັ້ນຕັ້ງຢູ່ຄັນແລ້ວນັ່ງເທິງອາສນະທີ່ເຂົາປູໄວ້ ລຳດັບນັ້ນ ຄົນທັງຫລາຍນິມົນຕ໌ໃຫ້ກິກຸຫນີນັ້ນຈັນແລ້ວໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ເປັນຫຍັງກິກຸຫນີທັງຫລາຍຈຶ່ງບໍ່ມາ" ຄັ້ງນັ້ນ ກິກຸຫນີນັ້ນບອກເຣື້ອງນັ້ນໃຫ້ຄົນທັງຫລາຍຊາບ ຄົນທັງຫລາຍຈຶ່ງຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດກິກຸຫນີຈຶ່ງຫວງຕະກູນລະ" ຄັນແລ້ວ ກິກຸຫນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກກິກຸຫັງຫລາຍໃຫ້ຊາບ ພວກກິກຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະກາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົດ**

ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີດ່າວງຕະກູນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະພາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງດ່າວງຕະກູນລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັຕທ໌] ຝ. ອາຮາມວັຄ ສິກຂາບົດທີ ໕ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໐໔໓] ກໍພິກສຸນີໃດດ່າວງຕະກູນ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີດ່າວງຕະກູນ ຈົບ

**ສິກຂາບົດວິພັງຄ໌**

[໑໐໔໔] ຄຳວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຕຣັສວ່າ ກໍ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຕະກູນ ໝາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກສັຕຣິຍ໌ ຕະກູນພຣາມຕ໌ ຕະກູນແພສຍ໌ ຕະກູນສູທຣ

ທີ່ຊື່ວ່າ ດ່າວງ ຄື ພິກສຸນີກ່າວໂທສຂອງຕະກູນໃນສຳນັກພິກສຸນີທັງຫລາຍດ້ອຍປະສົງຄ໌ວ່າ "ເຮັດຢ່າງໃດ ພິກສຸນີທັງຫລາຍຈຶ່ງຈະບໍ່ມາ" ຕ້ອງອາບັຕິປາຈິຕຕີຍ໌ ຫລືກ່າວໂທສພິກສຸນີໃນສຳນັກຕະກູນ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**
ภิกษุณีต่อไปนี้ບໍ່ຕ້ອງອາບັຕິ ຄື
[໑໐໔໕] ໑. ພິກຂຸນີບໍ່ໄດ້ຫາອງຕະກູນແຕ່ບອກສະເພາະໂທສທີ່ມີຢູ່
໔. ພິກຂຸນີວິກິລຈິດ
໖. ພິກຂຸນີຕົ້ນບັນຍັດ

ສິກຂາບົທທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໖. ອາຣາມວັຄ ສິກຂາບົທທີ ໖ ນິທານວັຕຖຸ

**໖. ອາຣາມວັຄ**

**ສິກຂາບົທທີ ໖**
ວ່າດ້ວຍການຢູ່ຈຳພັນສາໃນອາວາສທີ່ບໍ່ມີພິກຂຸ

**ເຣື້ອງພິກຂຸນີຫລາຍຮູບ**
[໑໐໔໖] ສມັຍນັ້ນ ພຣະຜູ້ມີພຣະພາຄພຸທສເຈົ້າປະທັບຢູ່ ພະ ພຣະເຊຕວັນ ອາຣາມຂອງອນາຖບິຕຕິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີຫລາຍຮູບອອກພັນສາແລ້ວໃນອາວາສໃກ້ໝູ່ບ້ານ ພາກັນໄປກຸງສາວັຕຖີ ພິກຂຸນີທັງຫລາຍໄດ້ກ່າວກັບພິກຂຸນີເຫລົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າທັງຫລາຍຈຳພັນສາທີ່ໃດ ໂອວາທສັມຣິທທິ໌ຜົລດີລະຫລື" ພິກຂຸນີເຫລົ່ານັ້ນຕອບວ່າ "ແມ່ເຈົ້າ ໃນອາວາສທີ່ພວກເຮົາຈຳພັນສາບໍ່ມີພິກຂຸເລີຍ ໂອວາທຈັກສັມຣິທທິ໌ຜົລດີຈາກທີ່ໃດກັນ" ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ພວກພິກຂຸນີຈຶ່ງຈຳພັນສາໃນອາວາສທີ່ບໍ່ມີພິກຂຸລະ"໑ ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາຄໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**
ລຳດັບນັ້ນ ພຣະຜູ້ມີພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸ

ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພວກພິກຂຸນີຈຳພັນສາໃນອາວາສທີ່ບໍ່ມີພິກຂຸ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸທສເຈົ້າຂ້າ" ພຣະຜູ້ມີພຣະກາຄພຸທສເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພວກພິກຂຸນີຈຶ່ງຈຳພັນສາໃນອາວາສທີ່ບໍ່ມີພິກຂຸລະ ພິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ "ອາວາສທີ່ບໍ່ມີພິກຂຸ" ຫມາຍເຖິງສຳນັກພິກຂຸນີທີ່ບໍ່ມີພິກຂຸຜູ້ຈະໃຫ້ໂອວາທຢູ່ພາຍໃນຣະຍະ ໑ ໂຍຊນ໌ ຫລືເສັ້ນທາງທີ່ຈະໄປຍັງສຳນັກພິກຂຸນີນັ້ນ ບໍ່ປອດກັຍ ບໍ່ສະດວກ ພິກຂຸບໍ່ສາມາດຍ່າງທາງໄປໃຫ້ໂອວາທໄດ້ (ວິ. ອ. ໔/໑໔໙/໓໔໑, ກງ໌ຂາ. ອ. ໓໙໑) ບໍ່ໄດ້ຫມາຍເຖິງອາວາສດຽວກັນກັບພິກຂຸ

**ພຣະວິນັຍປິດົກ ພິກຂຸນີວິກັງຄ໌ [໔. ປາຈິຕຕີຍກັຕຫ໌] ໖. ອາຣາມວັຄ ສິກຂາບົທທີ ໖ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໐໔໗] ກໍພິກຂຸນີໃດຈຳພັນສາໃນອາວາສທີ່ບໍ່ມີພິກຂຸ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກຂຸນີຫລາຍຮູບ ຈົບ

**ສິກຂາບົທວິກັງຄ໌**

[໑໐໔໘] ຄຳວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຕຣັສວ່າ ກໍ . . . ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະກາຄຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມຫມາຍນີ້

ອາວາສທີ່ຊື່ວ່າ ບໍ່ມີພິກຂຸ ໄດ້ແກ່ ອາວາສທີ່ພິກຂຸນີບໍ່ສາມາດໄປຮັບໂອວາທຫລືສົມອັນເປັນເຫຕຸຢູ່ຮ່ວມກັນໄດ້໑ ພິກຂຸນີຕັ້ງໃຈວ່າ "ຈະຈຳພັນສາ" ແລ້ວຈັດແຈງເສນາສນະ ຕັ້ງນ້ຳສັນນ້ຳໃຊ້ໄວ້ກວາດບໍຣິເວຕະ ຕ້ອງອາບັຕິທຸກກຕ ພໍອຣຸຕຂຶ້ນ ຕ້ອງອາບັຕິປາຈິຕຕີຍ໌

